# ພຣະໄຕຣປິດົກພາສາລາວ

## ເຫຼັ້ມທີ ໔

# ພຣະວິໄນ

## ເຫຼັ້ມທີ ໔

## ມະຫາວັກ ພາກ ໑



ສະບັບຄົ້ນຄົ້ວວັດທາດຫຼວງເໜືອ
ພຸດທະສັກກະຣາດ ໒໕໖໕

# ຄຳປາລົບ

ສືບເນື່ອງ ອາດຕະມາໄດ້ມີໂອກາດມາຊ່ວຍພຣະອາຈານອົງໜຶ່ງເຮັດພຣະໄຕປິດົກສະບັບພາສາບາລີລາວ ອອກມາເປັນເຫຼັ້ມ ຢູ່ທີ່ຫໍທຳມະສະພາ ວັດທາດຫຼວງເໜືອ ໃນປີ ພ.ສ ໒໕໕໕-໒໕໕໗ ເປັນຈຳນວນ ໓໕ ຊຸດ ໑,໕໗໕ ຫົວ ໂດຍມີຍາທ່ານໃຫຍ່ ມະຫາເວດ ມະເສໄນ ເປັນປະທ່ານເກັບກຳຄ່າໃຊ້ຈ່າຍ ຈົນສຳເລັດລົງດ້ວຍດີ ໂດຍມີແຜນການຈັກສືບຕໍ່ແປພຣະໄຕຣປິດົກສະບັບພາສາໄທ ມ.ຈ.ລ. ມາເປັນພາສາລາວ ອາດຕະມາຄຶດເຫັນວ່າເປັນມະຫາບຸນກຸສົນອັນຍິ່ງໃຫຍ່ແກ່ຕົນທີ່ຈະໄດ້ອ່ານ ແລະແປພຣະໄຕຣປິດົກອອກມາເປັນພາສາລາວທັງໝົດ ອັນເປັນໜັງສືທີ່ຮົບໂຮມຄວາມຮູ້ ຄຳສັ່ງສອນຂອງພຣະພຸດທະເຈົ້າທີ່ອາດຕະມາເຄົາລົບ ແລະສັດທາເໜືອສິ່ງອື່ນໃດ ຈຶ່ງໄດ້ຢູ່ສືບຕໍ່ແປໂດຍລຳພັງພຽງອົງດຽວຢູ່ຫໍທຳມະສະພາບ່ອນເກົ່າ ໂດຍມີຄວາມຮູ້ບໍ່ຈົບ ມ ໒ ຄຶດຢ້ານເຮັດຜິດຫຼາຍກວ່າຖືກຢູ່ ແຕ່ອາໃສສັດທາທີ່ມີຢູ່ໃນໂຕ ຈຶ່ງສູ້ຊົນຫາຄວາມຮູ້ເອົາເອງຜ່ານໄປ ໓ ປີ ກໍໄດ້ແປພຣະວິໄນປິດົກສຳເລັດໄດ້ ໘ ເຫຼັ້ມ

ແຕ່ຕໍ່ມາໄດ້ເກີດປັນຫາຂຶ້ນໃນການແປພຣະໄຕຣປິດົກສະບັບ ມ.ຈ.ລ ຂອງຣາດສະອານາຈັກໄທມາເປັນພາສາລາວ ໃນຄັ້ງນີ້ ກ່ຽວກັບໂປຣແກຣມທີ່ໃຊ້ແປຢູ່ບໍ່ສາມາດແປງເອກກະສານຂອງໂປແກຣມເກົ່າໃຫ້ມາເປັນໂປຣແກຣມໃໝ່ໄດ້ ອາດຕະມາຈຶ່ງຕັດໃຈຖິ້ມວຽກທີ່ໄດ້ແປມາ ໘ ເຫຼັ້ມນັ້ນໄປແລ້ວນັບໜຶ່ງໃໝ່ຈົນຜ່ານມາອີກ ໕ ປີ ກໍໄດ້ສຳເລັດລົງໂດຍມີພຣະອາຈານອົງນັ້ນເປັນຜູ້ແກ້ສຳນວນໃຫ້ອີກປີໜຶ່ງ

ຂໍໃຫ້ບຸກຄົນທີ່ຈະນຳເອົາໄປໃຊ້ຮັບຮູ້ໄວ້ວ່າ ເປັນການແປໂດຍສ່ວນບຸກຄົນມີພຽງແຕ່ຄູບາ ໒ ອົງເທົ່ານັ້ນ ໂດຍມີເຈດຕະນາ ກາຍ ຄັດລອກ ໂຄງສ້າງເກົ່າມາແປທັງໝົດ ທັງຫົວຂໍ້ ແລະວັກຄືກັນທັງໝົດ ໔໕ ຫົວ ຕ່າງແຕ່ສາຣະບານ ແລະການຈັດໜ້າ ແລະບໍ່ມີຄຳນຳ

ສະນັ້ນ ອາດຕະມາເອງຜູ້ແປຮູ້ດີວ່າຍັງມີຂໍ້ຜິດພາດຢູ່ຫຼາຍ ບໍ່ວ່າຄຳຜິດ ສຳນວນທີ່ໃຊ້ອ່ອນໄປ ຍ້ອນອາດຕະມາເອງການສຶກສາບໍ່ສູງ ຈຶ່ງຂໍອະໄພໄວ້ໃນທີ່ນີ້ ແລະຂໍແນະນຳໃຫ້ລະມັດລະວັງໃນການນຳໄປໃຊ້ອ້າງອີງ ຫຼື ເຮັດອອກມາເປັນເຫຼັ້ມ ກະລຸນາກວດແກ້ໃໝ່ກ່ອນທັງໝົດ

ສຸດທ້າຍນີ້ ຂໍຂອບໃຈ ລະລຶກຮູ້ບຸນຄຸນຂອງຄະນະຜູ້ແປຕົ້ນສະບັບ ມ.ຈ.ລ ພາສາໄທຍາທ່ານໃຫຍ່ ຖາວອນ ຕາພອນປະເສີດ ເຈົ້າອາທິການວັດທາດຫຼວງເໜືອ ທີ່ອຳນວຍຄວາມສະດວກໃນການເຮັດວຽກ ຄູບາ ບູນ ອົງແນະນຳໃຫ້ໃຊ້ໂປຣແກຣມໃໝ່ເຮັດໃຫ້ແປໄດ້ໄວຂຶ້ນຫຼາຍ ແລະ ພຣະອາຈານຜູ້ຊີ້ນຳເຂົ້າມາເຮັດວຽກແປພຣະໄຕຣປິດົກໃນຄັ້ງນີ້ອີກອົງໜຶ່ງ ເພິ່ນບໍ່ປະສົງອອກນາມຄືອາດຕະມາ ຂໍພຣະສັດທຳຂອງອົງສົມເດັດ ພຣະສຳມາສຳພຸດທະເຈົ້າຈົງເກື້ອກູນແດ່ ເພື່ອນ ເກີດ ແກ່ ເຈັບ ຕາຍ ທຸກຄົນ ທຸກຊັ້ນ ທຸກວັນນະ ທຸກພົບ ທຸກພູມ ເທີ້ນ.

# ສາຣະບານ


**໔. ຈຳມະຂັນທະກະ** ........................................................ ໑

໑໔ກ. ໂສນະໂກລິວິສະວັດຖຸ ........................................................ ໑

ວ່າດ້ວຍບຸດເສດຖີຊື່ໂສນະໂກລິວິສະ ........................................................ ໑

໑໔໗. ທິຄຸນາທິອຸປາຫະນະປະຕິກເຂປະ ........................................................ ໑໐

ວ່າດ້ວຍຊົງຫ້າມໃຊ້ເກີບ ໔ ຊັ້ນເປັນຕົ້ນ ........................................................ ໑໐

໑໔໙. ສັບພະນີລະກາທິປະຕິກເຂປະ ........................................................ ໑໑

ວ່າດ້ວຍຊົງຫ້າມໃຊ້ເກີບສີຂຽວລ້ວນເປັນຕົ້ນ ........................................................ ໑໑

໑໕໐. ໂອມຸກກະຄຸນັງຄຸນຸປາຫະນານຸຊານນາ ........................................................ ໑໓

ວ່າດ້ວຍຊົງອະນຸຍາດເກີບຫຼາຍຊັ້ນທີ່ໃຊ້ແລ້ວ ........................................................ ໑໓

໑໕໑. ອັດຊາຣາມຸປາຫະນະປະຕິກເຂປະ ........................................................ ໑໓

ວ່າດ້ວຍຊົງຫ້າມໃສ່ເກີບໃນອາຣາມ ........................................................ ໑໓

໑໕໔. ກັດຖະປາທຸກາທິປະຕິກເຂປະ ........................................................ ໑໕

ວ່າດ້ວຍຊົງຫ້າມໃສ່ຊຽງຕີນໄມ້ເປັນຕົ້ນ ........................................................ ໑໕

໑໕໓. ຍານາທິປະຕິກເຂປະ ........................................................ ໔໑

ວ່າດ້ວຍຊົງຫ້າມຍານພາຫະນະເປັນຕົ້ນ ........................................................ ໔໑

໑໕໔. ອຸດຈາສະຍະນະມະຫາສະຍະນາປະຕິກເຂປະ ........................................................ ໔໔

ວ່າດ້ວຍຊົງຫ້າມບ່ອນນອນສູງໃຫຍ່ ........................................................ ໔໔

໑໕໕. ສັບພະຈຳມະປະຕິກເຂປະ ........................................................ ໔໕

ວ່າດ້ວຍຊົງຫ້າມແຜ່ນໜັງ ........................................................ ໔໕

໑໕໖. ຄິຫິວິກະຕານຸນຍາຕາທິ ........................................................ ໔໖

ວ່າດ້ວຍຊົງອະນຸຍາດເຄື່ອງຄິຫິວິກັດເປັນຕົ້ນ ........................................................ ໔໖

໑໕໗. ໂສນະກຸຕິກັນນະວັດຖຸ ........................................................ ໔໗

ວ່າດ້ວຍພຣະໂສນະກຸຕິກັນນະ ........................................................ ໔໗

໑໕໘. ມະຫາກັດຈານະປັນຈະອະຣະປະຣິທັດສະນາ ........................................................ ໔໘

ວ່າດ້ວຍອາບັດຕິກະພິດຂອງທ່ານພຣະມະຫາກັດຈານະ ໕ ປະການ ........................................................ ໔໘

໑໕໙. ລວມເລື້ອງທີ່ມີໃນຈຳມະຂັນທະກະ ........................................................ ໓໓

ຈຳມະຂັນທະກະມີ ໖໓ ເລື້ອງ ຄື ........................................................ ໓໓

**໖. ເພສັດຊະຂັນທະກະ** ........................................................ ໓໕

໑໖໐. ປັນຈະເພສັດຊະກະຖາ ........................................................ ໓໕

ວ່າດ້ວຍຊົງອະນຸຍາດເພສັດ ໕ ........................................................ ໓໕
໑໒໑. ມູລາທິເພສັດຊະກະຖາ ........................................................ ໓໗
ວ່າດ້ວຍຊົງອະນຸຍາດເຄື່ອງຢາມີຮາກໄມ້ເປັນຕົ້ນ........................................................ ໓໗
໑໒໔. ປີລິນທະວັດສະວັດຖຸ ........................................................ ໕໔
ວ່າດ້ວຍພຣະປີລິນທະວັດສະ........................................................ ໕໔
ເລື້ອງພຣະປີລິນທະວັດສະຈະທຳຄວາມສະອາດເງີບພູ ແລະພຣະເຈົ້າພິມພິສານພຣະ
ຣາດຊະທານຄົນງານວັດ ........................................................ ໕໔
໑໒໓. ຄຸລາທິອະນຸຊານະນາ ........................................................ ໕໒
ວ່າດ້ວຍຊົງອະນຸຍາດນ້ຳອ້ອຍປ່ງງເປັນຕົ້ນ ........................................................ ໕໒
໑໒໔. ອັນໂຕວຸດຖາທິປະຕິກເຂປະກະຖາ ........................................................ ໕໗
ວ່າດ້ວຍຊົງຫ້າມການຫຸງຕົ້ມພາຍໃນເປັນຕົ້ນ........................................................ ໕໗
໑໒໕. ອຸກຄະທິຕະປະຕິກຄະຫະນາ........................................................ ໕໙
ວ່າດ້ວຍການຮັບປະເຄນຂອງທີ່ຈັບຕ້ອງແລ້ວ ........................................................ ໕໙
໑໒໒. ປະຕິກຄະທິຕາທິອະນຸຊານະນາ........................................................ ໒໑
ວ່າດ້ວຍຊົງອະນຸຍາດໃຫ້ສັນຂອງທີ່ຮັບປະເຄນໄວ້ເປັນຕົ້ນ ........................................................ ໒໑
໑໒໗. ສັດຖະກຳມະປະຕິກເຂປະກະຖາ........................................................ ໒໔
ວ່າດ້ວຍການຊົງຫ້າມເຮັດສັດຖກຳ........................................................ ໒໔
໑໒໘. ມະນຸດສະມັງສະປະຕິກເຂປະກະຖາ ........................................................ ໒໕
ວ່າດ້ວຍຊົງຫ້າມສັນຊີ້ນມະນຸດ ........................................................ ໒໕
໑໒໙. ຫັດຖີມັງສາທິປະຕິກເຂປະກະຖາ ........................................................ ໒໘
ວ່າດ້ວຍຊົງຫ້າມສັນຊີ້ນຊ້າງເປັນຕົ້ນ ........................................................ ໒໘
໑໗໐. ຍາຄຸມະທຸໂຄລະການຸຊານະນາ........................................................ ໗໑
ວ່າດ້ວຍຊົງອະນຸຍາດເຂົ້າຕົ້ມແລະເຂົ້າໜົມຫວານ ........................................................ ໗໑
໑໗໑. ຕະຣຸນັບປະສັນນະມະຫາມັດຕະວັດຖຸ........................................................ ໗໓
ວ່າດ້ວຍມະຫາອຳໝາດຜູ້ເຫຼື້ອມໃສໃໝ່ ........................................................ ໗໓
໑໗໔. ເພລັດຖະກັດຈານະວັດຖຸ........................................................ ໗໕
ວ່າດ້ວຍພາມເພລັດຖະກັດຈານະຖວາຍນ້ຳອ້ອຍປ່ງງ ........................................................ ໗໕
໑໗໓. ປາຕະລິຄາມະວັດຖຸ ........................................................ ໗໙
ວ່າດ້ວຍຊາວປາຕະລິຄາມຖວາຍທີ່ພັກ........................................................ ໗໙
໑໗໔. ສຸນິທະວັດສະກາຣະວັດຖຸ ........................................................ ໘໔
ວ່າດ້ວຍມະຫາອຳໝາດສຸນິທະແລະວັດສະກາຣະ ........................................................ ໘໔

໑໗໕. ໂກຕິຄາມະສັດຈະກະຖາ ........ ໘໕

ວ່າດ້ວຍຊົງສະແດງອະຣິຍະສັດທີ່ໂກຕິຄາມ ........ ໘໕

໑໗໖. ອຳພະປາລີວັດຖຸ ........ ໘໕

ວ່າດ້ວຍຍິງງາມເມືອງຊື່ອຳພະປາລີ ........ ໘໕

໑໗໗. ລິດສະຫວີວັດຖຸ ........ ໘໖

ວ່າດ້ວຍເຈົ້າລິດສະຫວີ ........ ໘໖

໑໗໘. ສີຫະເສນາປະຕິວັດຖຸ ........ ໘໘

ວ່າດ້ວຍສີຫະເສນາບໍດີສາວົກຂອງນິຄົນນາຕະບຸດ ........ ໘໘

໑໗໙. ກັບປິຍະພູມິອະນຸຊານະນາ ........ ໙໕

ວ່າດ້ວຍການຊົງອະນຸຍາດກັບປິຍະພູມ ........ ໙໕

໑໘໐. ເມນທະກະຄະຫະປະຕິວັດຖຸ ........ ໙໘

ວ່າດ້ວຍເມນທະກະຄະຫະບໍດີຖວາຍປັນຈະໂຄຣົດກັບສະບຽງເດີນທາງ ........ ໙໘

໑໘໑. ປັນຈະໂຄຣະສາທິອະນຸຊານະນາ ........ ໑໐໔

ວ່າດ້ວຍຊົງອະນຸຍາດປັນຈະໂຄຣົດເປັນຕົ້ນ ........ ໑໐໔

໑໘໒. ເກນິຍະຊະຕິລະວັດຖຸ ........ ໑໐໖

ວ່າດ້ວຍເກນິຍະຊະດິນຖວາຍນ້ຳອັດຖະບານ ........ ໑໐໖

໑໘໓. ໂຣຊະມັນລະວັດຖຸ ........ ໑໐໙

ວ່າດ້ວຍເຈົ້າມັນລະຊື່ໂຣຊະຖວາຍຜັກກາດສົດແລະຂອງສັນເຮັດດ້ວຍແປ້ງ ........ ໑໐໙

໑໘໔. ວຸດຖະປັບພະຊິຕະວັດຖຸ ........ ໑໑໒

ວ່າດ້ວຍພິກຂຸເຖົ້າເຄີຍເປັນຊ່າງຕັດຜົມໃນເມືອງອາຕຸມາ ........ ໑໑໒

໑໘໕. ຈະຕຸມະຫາປະເທສະກະຖາ ........ ໑໑໔

ວ່າດ້ວຍມະຫາປະເທດ ໔ ........ ໑໑໔

ໃນຂັນທະກະນີ້ມີ ໑໐໖ ເລື້ອງ ........ ໑໑໕

໑໘໖. ລວມເລື້ອງທີ່ມີໃນເພສັດຊະຂັນທະກະ ........ ໑໑໕

**ກ. ກະຖິນຂັນທະກະ** ........ ໑໑໙

໑໘໗. ກະຖິນານຸຊານະນາ ........ ໑໑໙

ວ່າດ້ວຍຊົງອະນຸຍາດໃຫ້ການກະຖິນ ........ ໑໑໙

໑໘໘. ອາທາຍະສັດຕະກະ ........ ໑໒໓

ວ່າດ້ວຍການເດາະກະຖິນດ້ວຍການຖືຈີວອນຫຼີກໄປ ໗ ກໍລະນີ ........ ໑໒໓

໑໘໙. ສະມາທາຍະສັດຕະກະ ........ ໑໒໓

ວ່າດ້ວຍການເດາະກະຖິນດ້ວຍການນຳຈີວອນຕິດໂຕຫຼີກໄປ ໗ ກໍລະນີ ........ ໑໒໓

໑໙໐. ອາຫາຍະສັກກະ....................................................................................... ໑໔໔
ວ່າດ້ວຍການເດາະກະຖິນດ້ວຍການຖືຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ໖ ກໍລະນີ....... ໑໔໔
໑໙໑. ສະມາຫາຍະສັກກະ ..................................................................................... ໑໔໕
ວ່າດ້ວຍການເດາະກະຖິນດ້ວຍການນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ໖ ກໍລະນີ..... ໑໔໕
໑໙໒. ອາຫາຍະປັນນະຣະສະກະ.......................................................................... ໑໔໖
ວ່າດ້ວຍການເດາະກະຖິນດ້ວຍການຖືຈີວອນຫຼີກໄປ ໑໕ ກໍລະນີ....................... ໑໔໖
໑໙໓. ສະມາຫາຍະປັນນະຣະສະກາທິ .................................................................. ໑໔໗
ວ່າດ້ວຍການເດາະກະຖິນດ້ວຍການນຳຈີວອນຕິດໂຕຫຼີກໄປ ໑໕ ກໍລະນີເປັນຕົ້ນ.. ໑໔໗
໑໙໔. ວິບປະກະຕະສະມາຫາຍະປັນນະຣະສະກະ ..................................................... ໑໔໙
ວ່າດ້ວຍການເດາະກະຖິນດ້ວຍການນຳຈີວອນທີ່ເຮັດຄ້າງໄວ້ຕິດໂຕຫຼີກໄປ ໑໕ ກໍລະນີ
........................................................................................................................ ໑໔໙
໑໙໕. ອະນາສາໂທລະສະກະ ............................................................................ ໑໕໑
ວ່າດ້ວຍການເດາະກະຖິນຍ້ອນຄວາມສິ້ນຫວັງ ໑໒ ກໍລະນີ............................. ໑໕໑
໑໙໖. ອາສາໂທລະສະກະ..................................................................................... ໑໕໓
ວ່າດ້ວຍການເດາະກະຖິນຍ້ອນຄວາມສົມຫວັງ ໑໒ ກໍລະນີ............................. ໑໕໓
໑໙໗. ກະຣະນີຍະໂທລະສະກະ............................................................................. ໑໕໕
ວ່າດ້ວຍການເດາະກະຖິນຍ້ອນມີທຸລະຈຳເປັນ ໑໒ ກໍລະນີ.............................. ໑໕໕
໑໙໘. ອະປະວິລາຍະນະນະວະກະ......................................................................... ໑໕໗
ວ່າດ້ວຍການເດາະກະຖິນຍ້ອນຫວັງໄດ້ສ່ວນຈີວອນ ໙ ກໍລະນີ......................... ໑໕໗
໑໙໙. ຜາສຸວິຫາຣະປັນຈະກະ ........................................................................... ໑໔໐
ວ່າດ້ວຍການເດາະກະຖິນຍ້ອນຫວັງຢູ່ຜາສຸກ ໕ ກໍລະນີ................................... ໑໔໐
໒໐໐. ປະລິໂພທາປະລິໂພທະກະຖາ...................................................................... ໑໔໒
ວ່າດ້ວຍປະລິໂພດແລະອະປະລິໂພດ .............................................................. ໑໔໒
໒໐໑. ລວມເລື້ອງທີ່ມີໃນກະຖິນຂັນທະກະ.................................................................. ໑໔໓
ອາຫາຍະສັດຕະກະ.......................................................................................... ໑໔໕
ວ່າດ້ວຍການເດາະກະຖິນດ້ວຍການຖືຈີວອນຫຼີກໄປ ໗ ກໍລະນີ ຄື..................... ໑໔໕
ສະມາຫາຍະສັດຕະກະ ..................................................................................... ໑໔໖
ວ່າດ້ວຍການເດາະກະຖິນດ້ວຍການນຳຈີວອນຕິດໂຕຫຼີກໄປ ໗ ກໍລະນີ ............. ໑໔໖

**໘. ຈີວອນຂັນທະກະ** ....................................................................................... ໑໔໗
໒໐໒. ຊີວະກະວັດຖຸ.............................................................................................. ໑໔໗
ວ່າດ້ວຍໝໍຊີວົກໂກມາຣະພັດ .......................................................................... ໑໔໗

໔໐໓. ເສດຖີພະຣິຍາວັດຖຸ ........ ໑໕໐
ວ່າດ້ວຍພັນລະຍາເສດຖີປວດທ້ອງ ........ ໑໕໐
໔໐໔. ພິມພິສາຣະຣາຊະວັດຖຸ ........ ໑໕໔
ວ່າດ້ວຍພຣະເຈົ້າພິມພິສານຈອມທັບມະຄົດຣັດ ........ ໑໕໔
໔໐໕. ຣາຊະຄະຫະເສດຖີວັດຖຸ ........ ໑໕໕
ວ່າດ້ວຍເສດຖີຊາວນະຄອນຣາດຊະຄຶ ........ ໑໕໕
໔໐໖. ເສດຖີປຸດຕະວັດຖຸ ........ ໑໕໖
ວ່າດ້ວຍບຸດເສດຖີ ........ ໑໕໖
໔໐໗. ປັດໂຊຕິຣາຊະວັດຖຸ ........ ໑໕໗
ວ່າດ້ວຍພຣະເຈົ້າປັດໂຊດ ........ ໑໕໗
໔໐໘. ສິເວີຍຍະກະທຸດສະຍຸຄະກະຖາ ........ ໑໖໐
ວ່າດ້ວຍການພຣະຣາດຊະທານຜ້າສີໄວຍະກະ ໑ ຄູ່ ........ ໑໖໐
໔໐໙. ສະມະຕິງສະວິເຣຈະນະກະຖາ ........ ໑໖໐
ວ່າດ້ວຍພຣະຜູ້ມີພຣະພາກເຈົ້າສະເຫວີຍພຣະໂອສົດຖ່າຍ ໓໐ ຄັ້ງ ........ ໑໖໐
໔໑໐. ວະຣະຍາຈະນາກະຖາ ........ ໑໖໔
ວ່າດ້ວຍໝໍຊີວົກໂກມາຣະພັດຂາບທູນຂໍພອນ ........ ໑໖໔
໔໑໑. ກຳພະລານຸຊານະນາທິກະຖາ ........ ໑໖໔
ວ່າດ້ວຍຊົງອະນຸຍາດຜ້າກຳພົນເປັນຕົ້ນ ........ ໑໖໔
ຊົງອະນຸຍາດຄະຫະບໍດີຈີວອນ ໖ ຊະນິດ ........ ໑໖໕
ເລື້ອງຜ້າເນື້ອດີ ເນື້ອຫຍາບ ........ ໑໖໕
໔໑໒. ປັງສຸກູລະປະຣິເຍສະນະກະຖາ ........ ໑໖໖
ວ່າດ້ວຍການສະແຫວງຫາຜ້າບັງສຸກຸນ ........ ໑໖໖
໔໑໓. ຈີວະຣະປະຕິກຄາຫະກະສຳມະຕິກະຖາ ........ ໑໖໗
ວ່າດ້ວຍການແຕ່ງຕັ້ງພິກຂຸເປັນເຈົ້າໜ້າທີ່ຮັບຈີວອນ ........ ໑໖໗
໔໑໔. ພັນທາຄາຣະສຳມະຕິອາທິກະຖາ ........ ໑໖໙
ວ່າດ້ວຍການສົມມຸດເຮືອນຄັງເປັນຕົ້ນ ........ ໑໖໙
໔໑໕. ຈີວະຣະຣະຊະນະກະຖາ ........ ໑໗໓
ວ່າດ້ວຍນ້ຳຍ້ອມຈີວອນ ........ ໑໗໓
໔໑໖. ສິດທະກະຈີວະຣານຸຊານະນາ ........ ໑໗໖
ວ່າດ້ວຍຊົງອະນຸຍາດຈີວອນຕັດ ........ ໑໗໖
໔໑໗. ຕິຈີວະຣານຸຊານະນາ ........ ໑໗໗

ວ່າດ້ວຍການອະນຸຍາດໄຕຣຈີວອນ ........ ໑໗໗
໔໑໘. ອະຕິເຣກະຈີວະຣະກະຖາ........ ໑໗໘
ວ່າດ້ວຍອະຕິເຣກຈີວອນ ........ ໑໗໘
໔໑໙. ວິສາຂາວັດຖຸ ........ ໑໘໐
ວ່າດ້ວຍນາງວິສາຂາຂາບທູນຂໍພອນ........ ໑໘໐
໔໒໐. ນິສີທະນາທິອະນຸຊານະນາ ........ ໑໘໕
ວ່າດ້ວຍຊົງອະນຸຍາດຜ້າຮອງນັ່ງເປັນຕົ້ນ ........ ໑໘໕
໔໒໑. ປັດສິມະວິກັບປະນຸປະຄະຈີວະຣາທິກະຖາ........ ໑໘໙
ວ່າດ້ວຍຜ້າທີ່ຕ້ອງວິກັບເປັນຢ່າງຕ່ຳເປັນຕົ້ນ ........ ໑໘໙
໔໒໒. ສັງຄິກະຈີວະຣຸບປາທະກະຖາ ........ ໑໙໓
ວ່າດ້ວຍການໃຫ້ຈີວອນເກີດຂຶ້ນແກ່ສົງ........ ໑໙໓
໔໒໓. ອຸປະນັນທະສັກກະຍະປຸດຕະວັດຖຸ ........ ໑໙໕
ວ່າດ້ວຍພຣະອຸປະນັນທະສາກະຍະບຸດ........ ໑໙໕
໔໒໔. ຄິລານະວັດຖຸກະຖາ ........ ໑໙໗
ວ່າດ້ວຍພິກຂຸໄຂ້........ ໑໙໗
ເລື້ອງຄົນໄຂ້ທີ່ປິ່ນປົວໄດ້ຍາກແລະປິ່ນປົວໄດ້ງ່າຍ ........ ໑໙໘
໔໒໕. ມະຕະສັນຕະກະກະຖາ........ ໒໐໐
ວ່າດ້ວຍການໃຫ້ບໍຣິຂານຂອງພິກຂຸມໍຣະນະພາບແກ່ຜູ້ປິ່ນປົວໄຂ້ ........ ໒໐໐
໔໒໖. ນັກຄິຍະປະຕິກເຂປະກະຖາ........ ໒໐໓
ວ່າດ້ວຍຊົງຫ້າມເປືອຍກາຍ ........ ໒໐໓
໔໒໗. ກຸສະຈີຣາທິປະຕິກເຂປະກະຖາ........ ໒໐໓
ວ່າດ້ວຍຊົງຫ້າມຜ້າຄາກອງເປັນຕົ້ນ ........ ໒໐໓
໔໒໘. ສັບພະນີລະກາທິປະຕິກເຂປະກະຖາ........ ໒໐໕
ວ່າດ້ວຍຊົງຫ້າມຈີວອນສີຂຽວລ້ວນເປັນຕົ້ນ........ ໒໐໕
໔໒໙. ວັດສັງວຸດຖານັງອະນຸບປັນນະຈີວະຣະກະຖາ........ ໒໐໕
ວ່າດ້ວຍຈີວອນຍັງບໍ່ເກີດແກ່ພິກຂຸຜູ້ຈຳພັນສາ........ ໒໐໕
໔໓໐. ສັງຄະພິນເນຈີວະຣຸບປາທະກະຖາ ........ ໒໐໗
ວ່າດ້ວຍຄວາມເກີດຂຶ້ນແຫ່ງຈີວອນເມື່ອສົງແຕກກັນ........ ໒໐໗
໔໓໑. ທຸກຄະຫິຕະສຸກຄະຫິຕາທິກະຖາ........ ໒໐໘
ວ່າດ້ວຍຈີວອນທີ່ຖືເອົາບໍ່ດີແລະຖືເອົາດີເປັນຕົ້ນ........ ໒໐໘
ເລື້ອງການຖືເອົາຂອງຝາກໂດຍວິສາສະແລະການອະທິຖານເປັນຈີວອນມໍລະດົກ .. ໒໐໘

໔໓໒. ອັດຖະຈີວະຣະມາຕິກາ ........................................ ໔໑໐
ວ່າດ້ວຍຈີວອນທີ່ເກີດຂຶ້ນມີ ໗ ມາຕິກາ ........................................ ໔໑໐
໔໓໓. ລວມເລື້ອງທີ່ມີໃນຈີວອນຂັນທະກະ ........................................ ໔໑໑
ຈີວອນຂັນທະກະມີ ໙໖ ເລື້ອງ ຄື ........................................ ໔໑໑

**໙. ຈຳເປີຍຍະຂັນທະກະ** ........................................ ໔໑໕
໔໓໔. ກັດສະປະໂຄດຕະພິກຂຸວັດຖຸ ........................................ ໔໑໕
ວ່າດ້ວຍພຣະກັດສະປະໂຄດ ........................................ ໔໑໕
໔໓໕. ອະທຳມະວັກຄາທິກຳມະກະຖາ ........................................ ໔໑໙
ວ່າດ້ວຍກຳທີ່ແບ່ງພວກໂດຍບໍ່ຊອບທຳເປັນຕົ້ນ ........................................ ໔໑໙
໔໓໖. ຍັດຕິວິປັນນະກັບປາທິກະຖາ ........................................ ໔໒໒
ວ່າດ້ວຍກຳທີ່ຍັດຕິວິບັດເປັນຕົ້ນ ........................................ ໔໒໒
໔໓໗. ຈະຕຸວັກຄະກະຣະນາທິກະຖາ ........................................ ໔໒໗
ວ່າດ້ວຍກຳທີ່ສົງກຳນົດຈຳນວນ ໔ ອົງເຮັດເປັນຕົ້ນ ........................................ ໔໒໗
໔໓໘. ປາຣິວາສິກາທິກະຖາ ........................................ ໔໓໑
ວ່າດ້ວຍພິກຂຸຜູ້ຢູ່ປະຣິວາດເປັນຕົ້ນ ........................................ ໔໓໑
ປະຕິໂກສະນາ(ການກ່າວຄັດຄ້ານ) ໒ ຢ່າງ ........................................ ໔໓໑
ເລື້ອງຄຳຄັດຄ້ານຂອງຄົນ ໒໗ ຈຳພວກຟັງບໍ່ຂຶ້ນ ........................................ ໔໓໑
໔໓໙. ທະເວນິດສາຣະນາທິກະຖາ ........................................ ໔໓໒
ວ່າດ້ວຍນິດສາຣະນາ ໒ ຢ່າງເປັນຕົ້ນ ........................................ ໔໓໒
໔໔໐. ອະທຳມະກຳມາທິກະຖາ ........................................ ໔໓໔
ວ່າດ້ວຍກຳທີ່ບໍ່ຖືກຕ້ອງຕາມທຳເປັນຕົ້ນ ........................................ ໔໓໔
໔໔໑. ອຸປາລິປຸດສາກະຖາ ........................................ ໔໓໗
ວ່າດ້ວຍພຣະອຸບາລີຂາບທູນຖາມບັນຫາ ........................................ ໔໓໗
ເລື້ອງກຳທີ່ຊອບດ້ວຍທຳຊອບດ້ວຍວິໄນ ........................................ ໔໓໙
ໝວດທີ ໑ ລວມ ໑໖ ກໍລະນີ ........................................ ໔໓໙
ເລື້ອງກຳບໍ່ຊອບດ້ວຍທຳບໍ່ຊອບດ້ວຍວິໄນ ........................................ ໔໔໐
໔໔໒. ຕັດຊະນີຍະກຳມະກະຖາ ........................................ ໔໔໕
ວ່າດ້ວຍຕັດຊະນີຍະກຳ ........................................ ໔໔໕
ເລື້ອງພິກຂຸໃນອາວາດອື່ນພ້ອມພຽງກັນໂດຍບໍ່ຊອບທຳ ........................................ ໔໔໖
໔໔໓. ນິຍະສະກຳມະກະຖາ ........................................ ໔໔໙
ວ່າດ້ວຍນິຍະສະກຳ ........................................ ໔໔໙

໔໔໔. ປັບພາຊະນິຍະກຳມະກະຖາ ........ ໔໕໐
ວ່າດ້ວຍປັບພາຊະນິຍະກຳ ........ ໔໕໐
໔໔໕. ປະຕິສາຣະນິຍະກຳມະກະຖາ ........ ໔໕໐
ວ່າດ້ວຍປະຕິສາຣະນິຍະກຳ ........ ໔໕໐
໔໔໖. ອະທັດສະນະອຸກເຂປະນິຍະກຳມະກະຖາ ........ ໔໕໑
ວ່າດ້ວຍອຸກເຂປະນິຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ........ ໔໕໑
໔໔໗. ອັບປະຕິກຳມະອຸກເຂປະນິຍະກຳມະກະຖາ ........ ໔໕໑
ວ່າດ້ວຍອຸກເຂປະນິຍະກຳຍ້ອນບໍ່ເຮັດຄືນອາບັດ ........ ໔໕໑
໔໔໘. ອັບປະຕິນິດສັກຄະອຸກເຂປະນິຍະກຳມະກະຖາ ........ ໔໕໑
ວ່າດ້ວຍອຸກເຂປະນິຍະກຳຍ້ອນບໍ່ສະລະທິດຖິບາບ ........ ໔໕໑
໔໔໙. ຕັດຊະນິຍະກຳມະປະຕິປັດສັດທິກະຖາ ........ ໔໕໒
ວ່າດ້ວຍການລະງັບຕັດຊະນິຍະກຳ ........ ໔໕໒
໔໕໐. ນິຍະສະກຳມະປະຕິປັດສັດທິກະຖາ ........ ໔໕໔
ວ່າດ້ວຍການລະງັບນິຍະສະກຳ ........ ໔໕໔
໔໕໑. ປັບພາຊະນິຍະກຳມະປະຕິປັດສັດທິກະຖາ ........ ໔໕໔
ວ່າດ້ວຍການລະງັບປັບພາຊະນິຍະກຳ ........ ໔໕໔
໔໕໒. ປະຕິສາຣະນິຍະກຳມະປະຕິປັດສັດທິກະຖາ ........ ໔໕໔
ວ່າດ້ວຍການລະງັບປະຕິສາຣະນິຍະກຳ ........ ໔໕໔
໔໕໓. ອະທັດສະນະອຸກເຂປະນິຍະກຳມະປະຕິປັດສັດທິກະຖາ ........ ໔໕໕
ວ່າດ້ວຍການລະງັບອຸກເຂປະນິຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ........ ໔໕໕
໔໕໔. ອັບປະຕິກຳມະອຸກເຂປະນິຍະກຳມະປະຕິປັດສັດທິກະຖາ ........ ໔໕໕
ວ່າດ້ວຍການລະງັບອຸກເຂປະນິຍະກຳຍ້ອນບໍ່ເຮັດຄືນອາບັດ ........ ໔໕໕
໔໕໕. ອັບປະຕິນິດສັກຄະອຸກເຂປະນິຍະກຳມະປະຕິປັດສັດທິກະຖາ ........ ໔໕໖
ວ່າດ້ວຍການລະງັບອຸກເຂປະນິຍະກຳຍ້ອນບໍ່ລະທິດຖິບາບ ........ ໔໕໖
໔໕໖. ຕັດຊະນິຍະກຳມະວິວາທະກະຖາ ........ ໔໕໖
ວ່າດ້ວຍຄວາມຂັດແຍ່ງໃນຕັດຊະນິຍະກຳ ........ ໔໕໖
໔໕໗. ນິຍະສະກຳມະວິວາທະກະຖາ ........ ໔໕໘
ວ່າດ້ວຍຄວາມຂັດແຍ່ງໃນນິຍະສະກຳ ........ ໔໕໘
໔໕໘. ປັບພາຊະນິຍະກຳມະວິວາທະກະຖາ ........ ໔໕໙
ວ່າດ້ວຍຄວາມຂັດແຍ່ງໃນປັບພາຊະນິຍະກຳ ........ ໔໕໙
໔໕໙. ປະຕິສາຣະນິຍະກຳມະວິວາທະກະຖາ ........ ໔໖໐

ວ່າດ້ວຍຄວາມຂັດແຍ່ງໃນປະຕິສາຣະນີຍະກຳ ............................................ ໔໓໐
໔໓໐. ອະທັດສະນະອຸກເຂປະນີຍະກຳມະວິວາທະກະຖາ........................................ ໔໓໐
ວ່າດ້ວຍຄວາມຂັດແຍ່ງໃນອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ .............. ໔໓໐
໔໓໑. ອັບປະຕິກຳມະອຸກເຂປະນີຍະກຳມະວິວາທະກະຖາ ...................................... ໔໓໑
ວ່າດ້ວຍຄວາມຂັດແຍ່ງໃນອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ .................... ໔໓໑
໔໓໔. ອັບປະຕິນິດສັກຄະອຸກເຂປະນີຍະກຳມະວິວາທະກະຖາ................................. ໔໓໑
ວ່າດ້ວຍຄວາມຂັດແຍ່ງໃນອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ................ ໔໓໑
໔໓໓. ຕັດຊະນີຍະກຳມະປະຕິປັດສັດທິກະຖາ...................................................... ໔໓໔
ວ່າດ້ວຍຄວາມຂັດແຍ່ງໃນການລະງັບຕັດຊະນີຍະກຳ .................................... ໔໓໔
໔໓໘. ນິຍະສະກຳມະປະຕິປັດສັດທິກະຖາ .......................................................... ໔໓໘
ວ່າດ້ວຍຄວາມຂັດແຍ່ງໃນການລະງັບນິຍະສະກຳ .......................................... ໔໓໘
໔໓໕. ປັບພາຊະນີຍະກຳມະປະຕິປັດສັດທິກະຖາ ................................................... ໔໓໕
ວ່າດ້ວຍຄວາມຂັດແຍ່ງໃນການລະງັບປັບພາຊະນີຍະກຳ ................................ ໔໓໕
໔໓໖. ປະຕິສາຣະນີຍະກຳມະປະຕິປັດສັດທິກະຖາ ................................................ ໔໓໕
ວ່າດ້ວຍຄວາມຂັດແຍ່ງໃນການລະງັບປະຕິສາຣະນີຍະກຳ .............................. ໔໓໕
໔໓໗. ອະທັດສະນະອຸກເຂປະນີຍະກຳມະປະຕິປັດສັດທິກະຖາ ................................ ໔໓໖
ວ່າດ້ວຍຄວາມຂັດແຍ່ງໃນການລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ໔໓໖
໔໓໙. ອັບປະຕິກຳມະອຸກເຂປະນີຍະກຳມະປະຕິປັດສັດທິກະຖາ ............................... ໔໓໗
ວ່າດ້ວຍຄວາມຂັດແຍ່ງໃນການລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ...... ໔໓໗
໔໓໙. ອັບປະຕິນິດສັກຄະອຸກເຂປະນີຍະກຳມະປະຕິປັດສັດທິກະຖາ .......................... ໔໓໙
ວ່າດ້ວຍຄວາມຂັດແຍ່ງໃນການລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ .. ໔໓໙
໔໗໐. ລວມເລື້ອງທີ່ມີໃນຈຳເປີຍຍະຂັນທະກະ ...................................................... ໔໓໙
ຈຳເປີຍຍະຂັນທະກະ ມີ ໓໖ ເລື້ອງ ຄື ........................................................ ໔໓໙

**໑໐. ໂກສຳພິກະຂັນທະກະ** ........................................................................ ໔໗໓
໔໗໑. ໂກສຳພິກະວິວາທະກະຖາ ........................................................................ ໔໗໓
ວ່າດ້ວຍເລື້ອງພິກຂຸຊາວນະຄອນໂກສຳພີຜິດຖຽງ ວິວາດກັນ........................... ໔໗໓
ເລື້ອງພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳ......................... ໔໗໙
໔໗໔. ທີຄາວຸວັດຖຸ.............................................................................................. ໔໙໑
ວ່າດ້ວຍທີຄາວຸກຸມານ ............................................................................... ໔໙໑
໔໗໓. ພາລະກະໂລນະກະຄະມະນະກະຖາ .......................................................... ໔໘໔
ວ່າດ້ວຍການສະເດັດໄປພາລະກະໂລນະກະຄາມ........................................... ໔໘໔

໘໗໔. ປາຈີນະວັງສະທາຍະຄະມະນະກະຖາ ........................................................ ໘໙໘
ວ່າດ້ວຍການສະເດັດໄປປາຈີນະວັງສະທາຍະວັນ .......................................... ໘໙໘
໘໗໕. ປາຣິເລີຍຍະກະຄະມະນະກະຖາ ............................................................ ໘໙໕
ວ່າດ້ວຍການສະເດັດໄປປ່າປາຣິໄລຍະກະ .................................................. ໘໙໕
໘໗໖. ອັດຖາຣະສະວັດຖຸກະຖາ ....................................................................... ໘໙໗
ວ່າດ້ວຍເລື້ອງທີ່ກໍ່ໃຫ້ເກີດຄວາມແຕກແຍກ ໑໘ ປະການ ................................ ໘໙໗
ເລື້ອງຊີ້ງສະແດງວິທີປະຕິບັດຕໍ່ພວກພິກຂຸຜູ້ກໍ່ຄວາມຜິດຖຽງວິວາດ ..................... ໘໙໙
ເລື້ອງຈັດເສນາສະນະໃຫ້ວ່າງ ......................................................................... ໙໐໘
໘໗໗. ໂອສາຣະນານຸຊານະນາ ......................................................................... ໙໐໘
ວ່າດ້ວຍຊົງອະນຸຍາດຮັບເຂົ້າໝູ່ເຊິ່ງພິກຂຸຜູ້ຖືກລົງອຸກເຂປະນີຍະກຳ ................. ໙໐໘
໘໗໘. ສັງຄະສາມັກຄີກະຖາ ........................................................................... ໙໐໙
ວ່າດ້ວຍສັງຄະສາມັກຄີ .............................................................................. ໙໐໙
໘໗໙. ອຸປາລີສັງຄະສາມັກຄີປຸດສາ ................................................................. ໙໐໕
ວ່າດ້ວຍພຣະອຸບາລີຂາບທູນຖາມເຖິງສັງຄະສາມັກຄີ ...................................... ໙໐໕
໘໘໐. ລວມເລື້ອງທີ່ມີໃນໂກສຳພິກະຂັນທະກະ ...................................................... ໙໐໗
ໂກສຳພິກະຂັນທະກະ ມີ ໑໔ ເລື້ອງ ຄື ........................................................ ໙໐໗

# ພຣະໄຕຣປິດົກ

## ເຫຼັ້ມທີ ໕

# ພຣະວິໄນ

## ເຫຼັ້ມທີ ໕

## ມະຫາວັກ ພາກ ໔

**ຂໍນອບນ້ອມແດ່ ພຣະຜູ້ມີພຣະພາກ ອະຣະຫັນຕະ ສໍາມາສໍາພຸດທະເຈົ້າ ພຣະອົງນັ້ນ**

## ໕. ຈໍາມະຂັນທະກະ

### ໑໔໗. ໂສນະໂກລິວິສະວັດຖຸ

### ວ່າດ້ວຍບຸດເສດຖີຊື່ໂສນະໂກລິວິສະ

### ເລື້ອງພຣະເຈົ້າພິມພິສານຮັບສັ່ງໃຫ້ໂສນະໂກລິວິສະເຂົ້າເຝົ້າ

[໔໔໔] ສະໄໝນັ້ນ ພຣະຜູ້ມີພຣະພາກພຸດທະເຈົ້າປະທັບຢູ່ພູຄິດຊະກູດ ເຂດນະຄອນຣາດຊະຄຶ ຄັ້ງນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ຄອງຣາດຊະສົມບັດເປັນໃຫຍ່ປົກຄອງໝູ່ບ້ານ ໘໐,໐໐໐ ໝູ່ບ້ານ

ຄັ້ງນັ້ນ ໃນນະຄອນຈຳປາ ມີບຸດເສດຖີຊື່ໂສນະໂກລິວິສະ ເປັນຄົນມີລັກສະນະລະອຽດອ່ອນມີຂົນຂຶ້ນທີ່ຝາຕີນທັງສອງ

ຕໍ່ມາ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ຮັບສັ່ງໃຫ້ກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນປະຊຸມກັນ ຊົງສົ່ງຣາຊະທູດໄປພົບນາຍໂສນະໂກລິວິສະດ້ວຍພຣະຣາຊະກິດບາງຢ່າງ ດ້ວຍຮັບສັ່ງວ່າ "ເຮົາຕ້ອງການໃຫ້ເຈົ້າໂສນະມາຫາ"

ຄັ້ງນັ້ນມານດາບິດາຂອງນາຍໂສນະໂກລິວິສະໄດ້ກ່າວກັບນາຍໂສນະໂກລິວິສະດັ່ງນີ້ວ່າ "ທ້າວໂສນະ ພຣະຣາຊາມີພຣະປະສົງຈະທອດພຣະເນດຕີນທັງສອງຂອງເຈົ້າ ທ້າວໂສນະ ເຈົ້າບໍ່ເພິ່ງຢຽດຕີນໄປທາງທີ່ພຣະຣາຊາປະທັບ ຈົ່ງນັ່ງຂັດສະມາທິກົງພຣະພັກຂອງພຣະຣາຊາ ພຣະອົງຈະທອດພຣະເນດຕີນທັງສອງ ເມື່ອເຈົ້ານັ່ງລົງແລ້ວ"

ຕໍ່ມາ ບໍລິວານຊົນໃຊ້ວໍນຳນາຍໂສນະໂກລິວິສະໄປ ລຳດັບນັ້ນ ໂສນະໂກລິວິສະໄດ້ເຂົ້າເຝົ້າພຣະເຈົ້າພິມພິສານຈອມທັບມະຄົດຣັດເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງຂັດສະມາທິກົງພຣະພັກຂອງພຣະຣາຊາ

ພຣະເຈົ້າພິມພິສານຈອມທັບມະຄົດຣັດ ໄດ້ທອດພຣະເນດເຫັນຂົນທີ່ຝາຕີນທັງສອງຂອງເຂົາແລ້ວ ຊົງສັ່ງສອນກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນ ກ່ຽວກັບປະໂຫຍດໃນປັດຈຸບັນ[๑] ຊົງສົ່ງກັບໄປດ້ວຍຣັບສັ່ງວ່າ "ທ່ານທັງຫຼາຍ ເຮົາສັ່ງສອນພວກທ່ານກ່ຽວກັບປະໂຫຍດ ໃນປັດຈຸບັນແລ້ວ ພວກທ່ານຈົ່ງໄປເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ພຣະຜູ້ມີພຣະພາກເຈົ້າຂອງເຮົາທັງຫຼາຍພຣະອົງນັ້ນ ຈະຊົງສັ່ງສອນພວກທ່ານກ່ຽວກັບປະໂຫຍດໃນພາຍພາກໜ້າ"

## ເລື້ອງພຣະສາຄະຕະສະແດງອິດທິປາຕິຫານ

ຄັ້ງນັ້ນ ກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນ ພາກັນໄປທີ່ພູຄິດຊະກູດ

ສະໄໝນັ້ນ ທ່ານພຣະສາຄະຕະເປັນພຣະອຸປັດຖາກພຣະຜູ້ມີພຣະພາກເຈົ້າ ຄັ້ງນັ້ນກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນເຫຼົ່ານັ້ນ ເຂົ້າໄປຫາທ່ານພຣະສາຄະຕະ ເຖິງທີ່ພັກແລ້ວ ໄດ້ກ່າວກັບທ່ານພຣະສາຄະຕະດັ່ງນີ້ວ່າ "ທ່ານຂ້ານ້ອຍ ກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນນີ້ພາກັນເຂົ້າມາທີ່ນີ້ເພື່ອຂໍເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຂໍໂອກາດໃຫ້ພວກເຮົາໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າແດ່ເທີ້ນ"

ທ່ານພຣະສາຄະຕະກ່າວວ່າ "ຖ້າເປັນແນວນັ້ນ ພວກທ່ານຈົ່ງຖ້າຢູ່ທີ່ນີ້ຈັກໜ້ອຍ ຈົນກວ່າອາດຕະມາຈະຂາບທູນໃຫ້ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້"

ລຳດັບນັ້ນ ທ່ານພຣະສາຄະຕະ ເມື່ອກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນກຳລັງແນມເບິ່ງຢູ່ສະເພາະໜ້າ ໄດ້ມຸດລົງໃຕ້ແຜ່ນຫີນໄປຜຸດຂຶ້ນກົງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ແລ້ວຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນນີ້ພາກັນເຂົ້າມາທີ່ນີ້ເພື່ອຂໍເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ຂໍພຣະຜູ້ມີພຣະພາກເຈົ້າໄດ້ໂຜດຊົງຊາບເວລາ ອັນຄວນໃນບັດນີ້ເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ສາຄະຕະ ຖ້າເປັນແນວນັ້ນ ທ່ານຈົ່ງປູອາສະນະໃຕ້ຮົ່ມເງົາທີ່ແຈສຸດວິຫານ”

ທ່ານພຣະສາຄະຕະຮັບສະໜອງພຣະພຸດທະດຳຣັດແລ້ວຖືຕັ່ງ ມຸດລົງເບື້ອງພຣະພັກຂອງພຣະຜູ້ມີພຣະພາກເຈົ້າ ຜຸດຂຶ້ນທີ່ແຜ່ນຫີນຕໍ່ໜ້າກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນທີ່ກຳລັງແນມເບິ່ງຢູ່ ແລ້ວປູອາສະນະໃຕ້ຮົ່ມເງົາທີ່ແຈສຸດພຣະວິຫານ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກພຣະວິຫານ ໄປປະທັບນັ່ງເທິງພຸດທະອາດທີ່ຈັດໄວ້ໃຕ້ຮົ່ມເງົາທີ່ແຈສຸດພຣະວິຫານ

ລຳດັບນັ້ນ ກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນນັ້ນໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງລົງທີ່ສົມຄວນ ພາກັນສົນໃຈແຕ່ທ່ານພຣະສາຄະຕະທໍ່ນັ້ນບໍ່ສົນໃຈພຣະຜູ້ມີພຣະພາກເຈົ້າເລີຍ

ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ດ້ວຍພຣະຫະໄທເຖິງຄວາມຄິດຄຳນຶງໃນຈິດຂອງກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນນັ້ນ ຈຶ່ງຮັບສັ່ງກັບທ່ານພຣະສາຄະຕະວ່າ “ສາຄະຕະ ຖ້າເປັນແນວນັ້ນ ທ່ານຈົ່ງສະແດງອິດທິປາຕິຫານເຊິ່ງເປັນອຸດຕະຣິມະນຸດສະທຳໃຫ້ຍິ່ງ ໆ ຂຶ້ນໄປ”

ທ່ານພຣະສາຄະຕະທູນຮັບສະໜອງພຣະພຸດທານຸຍາດແລ້ວເຫາະຂຶ້ນສູ່ອາກາດ ຈົງກົມແດ່ ຢືນແດ່ ນັ່ງແດ່ ນອນແດ່ ບັງຫວນຄວັນແດ່ ບັນດານໄຟໃຫ້ຮຸ່ງແດ່ ຫາຍໂຕແດ່ ໃນອາກາດກາງທ້ອງຟ້າ

ລຳດັບນັ້ນ ເມື່ອທ່ານພຣະສາຄະຕະສະແດງອິດທິປາຕິຫານເຊິ່ງເປັນອຸດຕະຣິມະນຸດສະທຳຫຼາຍແນວໃນອາກາດກາງທ້ອງຟ້າແລ້ວ ຈຶ່ງກັບລົງມາຊົບຫົວແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ໄດ້ຂາບທູນດັ່ງນີ້ວ່າ “ພຣະຜູ້ມີພຣະພາກເຈົ້າເປັນພຣະສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ ພຣະຜູ້ມີພຣະພາກເຈົ້າເປັນສາດສະດາຂອງຂ້າພຣະອົງ ຂ້າພຣະອົງເປັນສາວົກ”

ຄັ້ງນັ້ນ ກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນນັ້ນ ຕ່າງສັນເສີນວ່າ “ໜ້າອັດສະຈັນຈິງ ບໍ່ເຄີຍຜາກົດ ພຣະສາວົກຍັງມີລິດຫຼາຍແນວນີ້ ມີອານຸພາບຫຼາຍເຖິງພຽງນີ້ ພຣະສາດສະດາ ຈະຕ້ອງມີລິດຫຼາຍ ມີອານຸພາບຫຼາຍ (ກວ່ານີ້) ແນ່ນອນ” ແລ້ວຫັນມາສົນໃຈພຣະຜູ້ມີພຣະພາກເຈົ້າທໍ່ນັ້ນ ບໍ່ຍອມສົນໃຈທ່ານພຣະສາຄະຕະອີກເລີຍ

## ຊົງສະແດງອະນຸປຸບພິກະຖາແລະອະຣິຍະສັດ ໔

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ດ້ວຍພຣະທະໄທເຖິງຄວາມຄິດຄຳນຶງໃນຈິດຂອງກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນນັ້ນ ຈຶ່ງຕັດອະນຸປຸບພິກະຖາ ຄື ຊົງປະກາດ

໑. ທານະກະຖາ (ເລື້ອງທານ)
໒. ສີລະກະຖາ (ເລື້ອງສີນ)
໓. ສັກຄະກະຖາ (ເລື້ອງສະຫວັນ)
໔. ກາມາທີນະວະກະຖາ (ເລື້ອງໂທດ ຄວາມຕ່ຳຊາມ ຄວາມເສົ້າໝອງແຫ່ງກາມ)[1]
໕. ເນກຂຳມານິສັງສະກະຖາ (ເລື້ອງອານິສົງແຫ່ງການອອກຈາກກາມ)

ເມື່ອຊົງຊາບວ່າກຸນລະບຸດເຫຼົ່ານັ້ນມີຈິດຄວນ ອ່ອນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາ[2]ຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນ ໄດ້ເກີດຂຶ້ນແກ່ກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນນັ້ນ ທີ່ອາສະນະນັ້ນແລວ່າ "ສິ່ງໃດສິ່ງໜຶ່ງ ມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ປຽບຄືຜ້າຂາວສະອາດ ປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນ ຢ່າງດີ

ກຸນລະບຸດໃນໝູ່ບ້ານ ໘໐,໐໐໐ ຄົນນັ້ນໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງ ທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອຜູ້ອື່ນ ໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄື ບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດ ດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບ ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງທັງຫຼາຍວ່າເປັນອຸປາສົກຜູ້ເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

## ເລື້ອງໂສນະໂກລິວິສະເສດຖີບຸດບັນພະຊາ

[໒໔໓] ຄັ້ງນັ້ນ ໂສນະໂກລິວິສະໄດ້ມີຄວາມຄິດດັ່ງນີ້ວ່າ "ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງນັ້ນ ເຮົາເຂົ້າໃຈວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ ບໍລິສຸດບໍລິບູນ

ຢ່າງຍິ່ງຄືຫອຍສັງທີ່ຂັດດີແລ້ວ ບໍ່ແມ່ນກະທຳໄດ້ງ່າຍ ຢ່າຈັ່ງຊັ້ນເລີຍ ເຮົາຄວນຈະແຖຜົມ ແຖໜວດ ນຸ່ງຫົ່ມຜ້າກາສາຍະອອກຈາກເຮືອນໄປບວດເປັນບັນພະຊິດ"

ຄັ້ງນັ້ນ ກຸນລະບຸດໃນໝູ່ບ້ານ ໗໐,໐໐໐ ຄົນ ຊົມຊື່ນພາສິດຂອງພຣະຜູ້ມີພຣະພາກເຈົ້າ ລຸກຈາກອາສະນະຖວາຍອະພິວາດ ກະທຳປະທັກຂິນແລ້ວຈາກໄປ ລຳດັບນັ້ນ ໂສນະໂກລິວິສະ ເມື່ອກຸນລະບຸດໃນໝູ່ບ້ານ ໗໐,໐໐໐ ຄົນ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວຈາກໄປບໍ່ດົນ ໄດ້ເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ຖວາຍອະພິວາດແລ້ວນັ່ງລົງ ທີ່ສົມຄວນ

ໂສນະໂກລິວິສກະຜູ້ນັ່ງ ທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງນັ້ນ ຂ້າພຣະອົງເຂົ້າໃຈວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຢ່າງຍິ່ງຄືຫອຍສັງທີ່ຂັດດີແລ້ວ ບໍ່ແມ່ນກະທຳໄດ້ງ່າຍ ຂ້າພຣະອົງປາຖະໜາຈະແຖຜົມ ແຖໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນມາບວດເປັນບັນພະຊິດ ຂໍພຣະຜູ້ມີພຣະພາກເຈົ້າຊົງພຣະກະລຸນາໃຫ້ຂ້າພຣະອົງບວດດ້ວຍເທີ້ນ"

ໂສນະໂກລິວິສະໄດ້ຮັບການບັນພະຊາອຸປະສົມບົດໃນພຸດທະສຳນັກ ແລະເມື່ອທ່ານອຸປະສົມບົດໄດ້ບໍ່ດົນ ອາໄສຢູ່ທີ່ປ່າສີຕະວັນ ທ່ານຜາຣົບຄວາມພຽນຢ່າງຍິ່ງ ຢ່າງຈົງກົມຈົນຕີນທັງສອງແຕກ ສະຖານທີ່ຍ່າງຈົງກົມເປື້ອນເລືອດຄືທີ່ຂ້າງົວ

ຕໍ່ມາ ທ່ານພຣະໂສນະໂກລິວິສະຫຼີບຫຼີກຢູ່ໃນບ່ອນສະງັດ ໄດ້ມີຄວາມຄິດດັ່ງນີ້ວ່າ "ໃນບັນດາພຣະສາວົກຂອງພຣະຜູ້ມີພຣະພາກເຈົ້າທີ່ຜາຣົບຄວາມພຽນ ເຮົາກໍເປັນຮູບໜຶ່ງ ແຕ່ເປັນຫຍັງຈິດຂອງເຮົາຈຶ່ງຍັງບໍ່ລຸດພົ້ນຈາກອາສະວະໂດຍບໍ່ຍຶດໝັ້ນຖືໝັ້ນໄດ້ນໍ ຊັບສົມບັດໃນຕະກູນຂອງເຮົາມີຢູ່ ເຮົາອາດໃຊ້ສອຍຊັບສົມບັດແລະພ່ຳເພັງບຸນໄດ້ ຢ່າຈັ່ງຊັ້ນເລີຍ ເຮົາຄວນສິກໄປໃຊ້ສອຍຊັບສົມບັດແລະພ່ຳເພັງບຸນ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ດ້ວຍພຣະທະໄທ ເຖິງຄວາມຄິດຄຳນຶງໃນຈິດຂອງທ່ານ ພຣະໂສນະໂກລິວິສະຈຶ່ງຊົງຫາຍໄປຈາກພູຄິດຊະກູດ ມາຜາກົດພຣະອົງທີ່ປ່າສີຕະວັນ ຄືຄົນມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸເປັນຈຳນວນຫຼາຍສະເດັດທ່ຽວຈາຣິກໄປຕາມເສນາສະນະ ສະເດັດໄປທາງທີ່ຍ່າງຈົງກົມ ຂອງທ່ານພຣະໂສນະໂກລິວິສະ ທອດພຣະເນດເຫັນສະຖານທີ່ຍ່າງຈົງກົມເປື້ອນເລືອດ ຈຶ່ງຮັບສັ່ງກັບພິກຂຸທັງຫຼາຍວ່າ "ສະຖານທີ່ຍ່າງຈົງກົມແຫ່ງນີ້ຂອງໃຜ ເປື້ອນເລືອດຄືທີ່ຂ້າງົວ"

ພິກຂຸທັງຫຼາຍຂາບທູນວ່າ "ທ່ານພຣະໂສນະໂກລິວິສະຜາຣົບຄວາມພຽນຢ່າງຍິ່ງ ຍ່າງຈົງກົມຈົນຕີນທັງສອງແຕກ ສະຖານທີ່ຍ່າງຈົງກົມແຫ່ງນີ້ຂອງທ່ານຈຶ່ງເປື້ອນເລືອດຄືທີ່ຂ້າງົວຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປທີ່ຢູ່ຂອງທ່ານພຣະໂສນະໂກລິວິສະປະທັບ ນັ່ງເທິງພຸດທະອາດທີ່ຈັດໄວ້ ແມ່ນທ່ານພຣະໂສນະໂກລິວິສະກໍຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງເຝົ້າຢູ່ທີ່ສົມຄວນ

## ເລື່ອງຊົງປຽບທຽບຄວາມພຽນກັບສາຍພິນ

ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະໂສນະໂກລິວິສະຜູ້ນັ່ງເຝົ້າຢູ່ທີ່ສົມຄວນດັ່ງນີ້ວ່າ "ໂສນະ ທ່ານຫຼີກຫຼີກຢູ່ໃນບ່ອນສະງັດ ໄດ້ມີຄວາມຄິດດັ່ງນີ້ວ່າ ໃນບັນດາພຣະສາວົກຂອງພຣະຜູ້ມີພຣະພາກເຈົ້າທີ່ຜາຣົບຄວາມພຽນ ເຮົາກໍເປັນອົງໜຶ່ງ ແຕ່ເປັນຫຍັງຈິດຂອງເຮົາຈຶ່ງຍັງບໍ່ລຸດພົ້ນຈາກອາສະວະໂດຍບໍ່ຢຶດໝັ້ນຖືໝັ້ນໄດ້ບໍ ຊັບສົມບັດໃນຕະກູນຂອງເຮົາມີຢູ່ ເຮົາອາດໃຊ້ສອຍຊັບສົມບັດແລະພ່ຳເພັງບຸນໄດ້ ຢ່າຈັ່ງຊັ້ນເລີຍ ເຮົາຄວນສິກໄປໃຊ້ສອຍຊັບສົມບັດແລະພ່ຳເພັງບຸນແມ່ນບໍ"

ທ່ານພຣະໂສນະທູນຮັບວ່າ "ເປັນແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໂສນະ ທ່ານເຂົ້າໃຈຂໍ້ນັ້ນແນວໃດ ເມື່ອຄັ້ງທີ່ທ່ານຢູ່ຄອງເຮືອນນັ້ນ ທ່ານເປັນຜູ້ຊ່ຽວຊານໃນການດີດພິນແມ່ນບໍ"

ທ່ານພຣະໂສນະຂາບທູນວ່າ "ເປັນແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ໂສນະ ທ່ານເຂົ້າໃຈຂໍ້ນັ້ນແນວໃດ ເວລາສາຍພິນຂອງທ່ານເຄັ່ງເກີນໄປ ພິນຂອງທ່ານມີສຽງໃຊ້ການໄດ້ບໍ"

ທ່ານພຣະໂສນະຂາບທູນວ່າ "ໃຊ້ການບໍ່ໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຖາມຕໍ່ວ່າ "ໂສນະ ທ່ານເຂົ້າໃຈຂໍ້ນັ້ນແນວໃດ ເວລາສາຍພິນຂອງທ່ານຍານເກີນໄປ ພິນຂອງທ່ານມີສຽງໃຊ້ການໄດ້ບໍ"

ທ່ານພຣະໂສນະຂາບທູນວ່າ "ໃຊ້ການບໍ່ໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຖາມວ່າ "ໂສນະ ທ່ານເຂົ້າໃຈຂໍ້ນັ້ນແນວໃດ ເວລາສາຍພິນຂອງທ່ານບໍ່ເຄັ່ງບໍ່ຍານນເກີນໄປ ຊຶ່ງຢູ່ໃນລະດັບທີ່ພໍເໝາະ ພິນຂອງທ່ານມີສຽງໃຊ້ການໄດ້ບໍ"

ທ່ານພຣະໂສນະຂາບທູນວ່າ "ໃຊ້ການໄດ້ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂສນະ ເຊັ່ນດຽວກັນ ຄວາມພຽນທີ່ຜາຣົບຢ່າງຍິ່ງ ຍ່ອມເປັນໄປເພື່ອຄວາມຟຸ້ງຊ່ານ ຄວາມພຽນທີ່ຫຍ່ອນຍານເກີນໄປ ຍ່ອມເປັນໄປເພື່ອຄວາມຂີ້ຄ້ານ ສັນນັ້ນ ທ່ານຈົ່ງຕັ້ງຄວາມພຽນໃຫ້ພໍດີ ຈົ່ງປັບອິນຊີໃຫ້ສະເໝີກັນ[9] ຈົ່ງຖືເອົານິມິດ[10]ໃນຄວາມສະເໝີກັນນັ້ນ" ທ່ານພຣະໂສນະທູນຮັບສະໜອງພຣະພຸດທະດຳຣັດແລ້ວ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າເມື່ອຊົງສອນທ່ານພຣະໂສນະດ້ວຍພຣະໂອວາດຂໍ້ນີ້ແລ້ວ ຊົງຫາຍໄປຈາກປ່າສີຕະວັນຕໍ່ໜ້າທ່ານພຣະໂສນະ ມາຜາກົດພຣະອົງທີ່ພູຄິດຊະກູດ ຄືຄົນມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ ສັນນັ້ນ

## ພຣະໂສນະບັນລຸອະຣະຫັດຕະຜົນ

ເມື່ອຕໍ່ມາ ທ່ານພຣະໂສນະໄດ້ຕັ້ງຄວາມພຽນໃຫ້ພໍດີ ປັບອິນຊີໃຫ້ສະເໝີກັນ ແລະຖືເອົານິມິດໃນຄວາມສະເໝີກັນນັ້ນ ໄດ້ຫຼີກໄປຢູ່ຜູ້ດຽວ ບໍ່ຜະໝາດ ມີຄວາມພຽນ ອຸທິດກາຍແລະໃຈບໍ່ດົນປານໃດ ກໍໄດ້ເຮັດໃຫ້ແຈ້ງປະໂຫຍດປະເສີດອັນເປັນບ່ອນສຸດແຫ່ງພົມມະຈັນທີ່ເຫຼົ່າກຸນລະບຸດຜູ້ອອກຈາກເຮືອນ ບວດເປັນບັນພະຊິດໂດຍຖືກຕ້ອງປາຖະໜາ ດ້ວຍ ປັນຍາອັນຍິ່ງເອງເຂົ້າເຖິງຢູ່ໃນປັດຈຸບັນ ຮູ້ແຈ້ງວ່າ “ຊາດໝົດແລ້ວ ຢູ່ຈົບພົມມະຈັນແລ້ວ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ມີກິດອື່ນເພື່ອຄວາມເປັນແນວນີ້ອີກຕໍ່ໄປ” ທ່ານພຣະໂສນະໄດ້ເປັນພຣະອະຣະຫັນອົງໜຶ່ງ ໃນຈຳນວນພຣະອະຣະຫັນທັງຫຼາຍ

## ອຸປະນິໄສສົມບັດຂອງຜູ້ເປັນພຣະອະຣະຫັນ

[໔໔໔] ຄັ້ງນັ້ນ ທ່ານພຣະໂສນະຜູ້ໄດ້ບັນລຸພຣະອະຣະຫັດຕະຜົນແລ້ວ ໄດ້ມີຄວາມຄິດດັ່ງນີ້ວ່າ “ຖ້າຈັ່ງໃດ ເຮົາເພິ່ງພະຍາກອນອະຣະຫັດຕະຜົນໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ” ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດແລ້ວນັ່ງເຝົ້າຢູ່ທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແດ່ ພຣະອົງຜູ້ຈະເລີນ ພິກຂຸຜູ້ເປັນພຣະອະຣະຫັນບໍ່ມີອາສະວະກິເລດ ຢູ່ຈົບພົມມະຈັນແລ້ວ ໄດ້ເຮັດກິດທີ່ຄວນເຮັດສຳເລັດແລ້ວ ປົງພາຣະໄດ້ແລ້ວ ບໍ່ມີໜ້າທີ່ຕ້ອງເຮັດອີກ ບັນລຸປະໂຫຍດສູງສຸດແລ້ວ ສິ້ນກິເລດເຄື່ອງມັດໄວ້ໃນພົບ ລຸດພົ້ນແລ້ວຍ້ອນຮູ້ໂດຍຖືກຕ້ອງ ຍ່ອມນ້ອມໄປໃນຖານະ ໖ ຄື

໑. ນ້ອມໄປໃນເນກຂຳມະ
໒. ນ້ອມໄປໃນປະວິເວກ
໓. ນ້ອມໄປໃນຄວາມບໍ່ບຽດບຽນ
໔. ນ້ອມໄປໃນຄວາມສິ້ນອຸປາທານ
໕. ນ້ອມໄປໃນຄວາມສິ້ນຕັນຫາ
໖. ນ້ອມໄປໃນຄວາມບໍ່ລຸ້ມຫຼົງ

ຂ້າແດ່ ພຣະອົງຜູ້ຈະເລີນ ບາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ສຳຄັນໄປວ່າ ທ່ານອົງນີ້ອາໄສຄຸນພຽງສັດທາແນວດຽວເປັນແນ່ຈຶ່ງນ້ອມໄປໃນເນກຂຳມະ ແຕ່ຂໍ້ນີ້ບໍ່ເພິ່ງເຫັນແນວນັ້ນ ຍ້ອນພຣະຂີນາສົບຜູ້ຢູ່ຈົບພົມມະຈັນ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ເຫັນວ່າຕົນຍັງຈະຕ້ອງເຮັດຫຍັງອີກ ຫຼືຕ້ອງໄປສັ່ງສົມກິດທີ່ເຮັດແລ້ວ ຍ່ອມເປັນຜູ້ນ້ອມໄປໃນເນກຂຳມະ ຍ້ອນສິ້ນ

ຣາຄະ ຍ້ອນປາສະຈາກຣາຄະ ຍ່ອມເປັນຜູ້ນ້ອມໄປໃນເນກຂຳມະ ຍ້ອນສິ້ນໂທສະ ຍ້ອນປາສະຈາກໂທສະ ຍ່ອມເປັນຜູ້ນ້ອມໄປໃນເນກຂຳມະ ຍ້ອນສິ້ນໂມຫະ ຍ້ອນປາສະຈາກໂມຫະ

ຂ້າແຕ່ ພຣະອົງຜູ້ຈະເລີນ ບາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ສຳຄັນໄປວ່າ ທ່ານອົງນີ້ຕ້ອງການລາບສັກກາຣະແລະຄວາມສັນເສີນເປັນແນ່ ຈຶ່ງນ້ອມໄປໃນປະວິເວກ ແຕ່ຂໍ້ນີ້ກໍບໍ່ເພິ່ງເຫັນແນວນັ້ນ ຍ້ອນພຣະຂີນາສົບຜູ້ຢູ່ຈົບພົມມະຈັນ ເຮັດກິດທີ່ຄວນເຮັດສຳເລັດແລ້ວ ບໍ່ເຫັນວ່າຕົນຍັງຈະຕ້ອງເຮັດຫຍັງອີກ ຫຼື ຕ້ອງໄປສັ່ງສົມກິດທີ່ເຮັດແລ້ວ ຍ່ອມເປັນຜູ້ນ້ອມໄປໃນປະວິເວກ ຍ້ອນສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມເປັນຜູ້ນ້ອມໄປໃນປະວິເວກ ຍ້ອນສິ້ນໂທສະ ຍ້ອນປາສະຈາກໂທສະ ຍ່ອມເປັນຜູ້ນ້ອມໄປໃນປະວິເວກ ຍ້ອນສິ້ນໂມຫະ ຍ້ອນປາສະຈາກໂມຫະ

ຂ້າແຕ່ ພຣະອົງຜູ້ຈະເລີນ ບາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ສຳຄັນໄປວ່າ "ທ່ານອົງນີ້ ຖືສີລັບພະຕະປະຣາມາດອໂດຍເປັນສາລະແນ່ ຈຶ່ງນ້ອມໄປໃນຄວາມບໍ່ບຽດບຽນ ແຕ່ຂໍ້ນີ້ກໍບໍ່ເພິ່ງເຫັນແນວນັ້ນ ຍ້ອນພຣະຂີນາສົບຜູ້ຢູ່ຈົບພົມມະຈັນ ເຮັດກິດທີ່ຄວນເຮັດສຳເລັດແລ້ວບໍ່ເຫັນວ່າຕົນຍັງຈະຕ້ອງເຮັດຫຍັງອີກຫຼືຕ້ອງໄປສັ່ງສົມກິດທີ່ເຮັດແລ້ວ ຍ່ອມເປັນຜູ້ນ້ອມໄປໃນຄວາມບໍ່ບຽດບຽນ ຍ້ອນສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມເປັນຜູ້ນ້ອມໄປໃນຄວາມບໍ່ບຽດບຽນ ຍ້ອນສິ້ນໂທສະ ຍ້ອນປາສະຈາກໂທສະ ຍ່ອມເປັນຜູ້ນ້ອມໄປໃນຄວາມບໍ່ບຽດບຽນ ຍ້ອນສິ້ນໂມຫະ ຍ້ອນປາສະຈາກໂມຫະ

ຂ້າແຕ່ ພຣະອົງຜູ້ຈະເລີນ ບາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ ຯລຯ ຍ່ອມເປັນຜູ້ນ້ອມໄປໃນຄວາມສິ້ນອຸປາທານ ຍ້ອນສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມເປັນຜູ້ນ້ອມໄປໃນຄວາມສິ້ນອຸປາ ທານ ຍ້ອນສິ້ນໂທສະ ຍ້ອນປາສະຈາກໂທສະ ຍ່ອມເປັນຜູ້ນ້ອມໄປໃນຄວາມສິ້ນອຸປາທານ ຍ້ອນສິ້ນໂມຫະ ຍ້ອນປາສະຈາກໂມຫະ

ຂ້າແຕ່ ພຣະອົງຜູ້ຈະເລີນ ບາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ ຯລຯ ຍ່ອມເປັນຜູ້ນ້ອມໄປໃນຄວາມສິ້ນຕັນຫາ ຍ້ອນສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມເປັນຜູ້ນ້ອມໄປໃນຄວາມສິ້ນຕັນຫາ ຍ້ອນສິ້ນໂທສະ ຍ້ອນປາສະຈາກໂທສະ ຍ່ອມເປັນຜູ້ນ້ອມໄປໃນຄວາມສິ້ນຕັນຫາ ຍ້ອນສິ້ນໂມຫະ ຍ້ອນປາສະຈາກໂມຫະ

ຂ້າແຕ່ ພຣະອົງຜູ້ຈະເລີນ ບາງເທື່ອຈະມີບາງທ່ານໃນພຣະທຳວິໄນນີ້ ຯລຯ ຍ່ອມເປັນຜູ້ນ້ອມໄປໃນຄວາມບໍ່ລຸ້ມຫຼົງ ຍ້ອນສິ້ນຣາຄະ ຍ້ອນປາສະຈາກຣາຄະ ຍ່ອມເປັນຜູ້ນ້ອມໄປໃນຄວາມບໍ່ລຸ້ມຫຼົງ ຍ້ອນສິ້ນໂທສະ ຍ້ອນປາສະຈາກໂທສະ ຍ່ອມເປັນຜູ້ນ້ອມໄປໃນຄວາມບໍ່ລຸ້ມຫຼົງ ຍ້ອນສິ້ນໂມຫະ ຍ້ອນປາສະຈາກໂມຫະ

ຖ້າຣູປາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງຕາ ມາຜາກົດທາງຕາຂອງພິກຂຸຜູ້ມີຈິດລຸດພົ້ນແລ້ວໂດຍຖືກຕ້ອງແນວນີ້ ຣູປາຣົມເຫຼົ່ານັ້ນຍ່ອມບໍ່ຄອບງຳຈິດຂອງພິກຂຸນັ້ນໄດ້ເລີຍ ຈິດຂອງພິກຂຸນັ້ນບໍ່ຖືກອາລົມຄອບງຳ ເປັນທຳມະຊາດໝັ້ນຄົງໜັກແໜ້ນ ແລະພິກຂຸນັ້ນກໍພິຈາລະນາເຫັນຄວາມເກີດດັບຂອງຈິດນັ້ນ

ຖ້າສັດທາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງຫູ ຯລຯ

ຖ້າຄັນທາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງດັງ ຯລຯ

ຖ້າຣະສາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງລີ້ນ ຯລຯ

ຖ້າໂຜດຖັບພາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງກາຍ ຯລຯ

ຖ້າທຳມາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງໃຈມາຜາກົດທາງໃຈຂອງພິກຂຸຜູ້ມີຈິດລຸດພົ້ນແລ້ວ ໂດຍຖືກຕ້ອງແນວນີ້ ທຳມາຣົມເຫຼົ່ານັ້ນຍ່ອມບໍ່ຄອບງຳຈິດຂອງພິກຂຸນັ້ນໄດ້ເລີຍ ຈິດຂອງພິກຂຸນັ້ນບໍ່ຖືກອາລົມຄອບງຳ ເປັນທຳມະຊາດໝັ້ນຄົງໜັກແໜ້ນ ແລະພິກຂຸນັ້ນກໍພິຈາລະນາເຫັນຄວາມເກີດດັບຂອງຈິດນັ້ນ

ຂ້າແຕ່ ພຣະອົງຜູ້ຈະເລີນ ພູສີລາລ້ວນ ບໍ່ມີປ່ອງ ບໍ່ມີໂການ ເປັນແທ່ງທຶບອັນດຽວກັນ ຖ້າລົມຝົນທີ່ແຮງພັດມາຈາກທິດຕາເວັນອອກ ກໍເຮັດພູນັ້ນໃຫ້ຫວັ່ນໄຫວສັ່ນສະເທືອນບໍ່ໄດ້

ຖ້າລົມຝົນທີ່ແຮງພັດມາຈາກທິດຕາເວັນຕົກ ຯລຯ

ຖ້າລົມຝົນທີ່ແຮງພັດມາຈາກທິດເໜືອ ຯລຯ

ຖ້າລົມຝົນທີ່ແຮງພັດມາຈາກທິດໃຕ້ ກໍເຮັດພູນັ້ນໃຫ້ຫວັ່ນໄຫວສັ່ນສະເທືອນບໍ່ໄດ້ ແມ່ນສັນໃດ

ຂ້າແຕ່ ພຣະອົງຈະເລີນ ຖ້າຣູປາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງຕາ ມາຜາກົດທາງຕາຂອງພິກຂຸຜູ້ມີຈິດລຸດພົ້ນແລ້ວໂດຍຖືກຕ້ອງແນວນີ້ ຣູປາຣົມເຫຼົ່ານັ້ນຍ່ອມບໍ່ຄອບງຳຈິດຂອງພິກຂຸນັ້ນໄດ້ເລີຍ ຈິດຂອງພິກຂຸນັ້ນບໍ່ຖືກອາລົມຄອບງຳ ເປັນທຳມະຊາດໝັ້ນຄົງໜັກແໜ້ນ ແລະພິກຂຸນັ້ນກໍພິຈາລະນາເຫັນຄວາມເກີດດັບຂອງຈິດນັ້ນ

ຖ້າສັດທາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງຫູ ຯລຯ

ຖ້າຄັນທາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງດັງ ຯລຯ

ຖ້າຣະສາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງລີ້ນ ຯລຯ

ຖ້າໂຜດຖັບພາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງກາຍ ຯລຯ

ຖ້າທຳມາຣົມທີ່ຮຸນແຮງອັນຈະເພິ່ງຮັບຮູ້ທາງໃຈມາຜາກົດທາງໃຈຂອງພິກຂຸຜູ້ມີຈິດລຸດພົ້ນແລ້ວ ໂດຍຖືກຕ້ອງແນວນີ້ ທຳມາຣົມເຫຼົ່ານັ້ນຍ່ອມບໍ່ຄອບງຳຈິດຂອງພິກຂຸນັ້ນໄດ້ເລີຍ ຈິດຂອງ

ພິກຂຸນັ້ນບໍ່ຖືກອາລົມຄອບງຳ ເປັນທຳມະຊາດໝັ້ນຄົງໜັກແໜ້ນ ແລະພິກຂຸນັ້ນກໍພິຈາລະນາເຫັນຄວາມ (ເກີດ) ດັບຂອງຈິດນັ້ນ

## ນິຄົມຄາຖາ

ຈິດຂອງພຣະຂີນາສົບຜູ້ນ້ອມໄປໃນເນກຂຳມະ
ນ້ອມໄປໃນປະວິເວກ ນ້ອມໄປໃນຄວາມບໍ່ບຽດບຽນ
ນ້ອມໄປໃນຄວາມສິ້ນອຸປາທານ ນ້ອມໄປໃນຄວາມສິ້ນຕັນຫາ
ແລະນ້ອມໄປໃນຄວາມບໍ່ລຸ້ມຫຼົງ[๗] ຍ່ອມລຸດພົ້ນໂດຍຖືກຕ້ອງ
ຍ້ອນເຫັນຄວາມເກີດແຫ່ງອາຍະຕະນະ[໔]
ພິກຂຸຜູ້ມີຈິດສະຫງົບລະງັບລຸດພົ້ນໂດຍຖືກຕ້ອງ
ຍ່ອມບໍ່ມີການສັ່ງສົມກິດທີ່ເຮັດແລ້ວ ທັງບໍ່ມີກິດທີ່ຈະຕ້ອງເຮັດອີກ
ພູຫີນແທ່ງທຶບຍ່ອມບໍ່ສະເທືອນຍ້ອນລົມ ສັນໃດ
ຮູບ ສຽງ ກິ່ນ ຣົດ ໂຜດຖັບພະ ແລະທຳມາຣົມທັງມວນ
ທັງທີ່ເປັນອິດຖາຣົມແລະອະນິດຖາຣົມ
ຍ່ອມເຮັດຈິດຂອງຜູ້ໝັ້ນຄົງໃຫ້ຫວັ່ນໄຫວບໍ່ໄດ້ ສັນນັ້ນ
ຈິດຂອງຜູ້ໝັ້ນຄົງນັ້ນ ເປັນຈິດຕັ້ງໝັ້ນ ບໍ່ຫວັ່ນໄຫວ
ບໍ່ເກາະກ່ຽວດ້ວຍອາລົມອັນໃດ ຍ້ອນທ່ານຜູ້ໝັ້ນຄົງ
ພິຈາລະນາເຫັນຄວາມເກີດດັບຂອງຈິດນັ້ນ

## ໑໔໗. ທີຄຸນາທີອຸປາຫະນະປະຕິກເຂປະ

## ວ່າດ້ວຍຊົງຫ້າມໃຊ້ເກີບ ໔ ຊັ້ນເປັນຕົ້ນ

[໔໔໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ກຸນລະບຸດທັງຫຼາຍກ່າວພະຍາກອນອະຣະຫັດຕະຜົນແນວນີ້ ຊື່ວ່າກ່າວແຕ່ເນື້ອຄວາມແລະບໍ່ໄດ້ນ້ອມຕົນເຂົ້າໄປແຕ່ໂມຄະບຸຣຸດລາງພວກ ໃນທຳວິໄນນີ້ເຫັນເປັນຂອງສະນຸກ ກ່າວພະຍາກອນອະຣະຫັດຕະຜົນພາຍຫຼັງ ຈຶ່ງເດືອດຮ້ອນ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບທ່ານພຣະໂສນະວ່າ "ໂສນະ ທ່ານເປັນຄົນສຸຂຸມາລະຊາດ ເຮົາອະນຸຍາດເກີບຊັ້ນດຽວແກ່ທ່ານ"

ທ່ານພຣະໂສນະຂາບທູນວ່າ "ຂ້າພຣະອົງລະຖິ້ມເງິນເຖິງ ໘໐ ເຫຼັ້ມກວຽນແລະກອງຄາຣາວານປະກອບດ້ວຍຊ້າງ ໗ ເຊືອກ ອອກບວດເປັນບັນພະຊິດ ເມື່ອເປັນແນວນີ້ ຖ້າຂ້າພຣະອົງຈະໃຊ້ເກີບຊັ້ນດຽວກໍຈະມີຄົນກ່າວວ່າ ພຣະໂສນະໂກລິວິສະລະຖິ້ມເງິນເຖິງ ໘໐ ເຫຼັ້ມກວຽນແລະກອງຄາຣາວານປະກອບດ້ວຍຊ້າງ ໗ ເຊືອກ ອອກບວດເປັນບັນພະຊິດ ເວລານີ້ທ່ານພຣະໂສນະນັ້ນຍັງຂ້ອງຢູ່ໃນເລື້ອງເກີບຊັ້ນດຽວ ຖ້າພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດພິກຂຸສົງ ແມ່ນຂ້າພຣະອົງກໍຈະໃຊ້ສອຍ ຖ້າພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດພິກຂຸສົງ ແມ່ນຂ້າພຣະອົງກໍຈະບໍ່ໃຊ້ສອຍ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເກີບຊັ້ນດຽວ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ເກີບ ໒ ຊັ້ນ ບໍ່ເພິ່ງໃສ່ເກີບ ໓ ຊັ້ນ ບໍ່ເພິ່ງໃສ່ເກີບຫຼາຍຊັ້ນ ອົງໃດໃສ່ ຕ້ອງອາບັດທຸກກົດ"

## ໑໘໗. ສັບພະນີລະກາທິປະຕິກເຂປະ

## ວ່າດ້ວຍຊົງຫ້າມໃຊ້ເກີບສີຂຽວລ້ວນເປັນຕົ້ນ

## ເລື້ອງພຣະສັບພັກຄີ

[໘໔໗] ສະໄໝນັ້ນ ພວກພິກຂຸສັບພັກຄີ ໃສ່ເກີບສີຂຽວລ້ວນ ຯລຯ ໃສ່ເກີບ ສີເຫຼືອງລ້ວນ ຯລຯ ໃສ່ເກີບສີແດງລ້ວນ ຯລຯ ໃສ່ເກີບສີບານເຢັນລ້ວນ ຯລຯ ໃສ່ເກີບ ສີດຳລ້ວນ ຯລຯ ໃສ່ເກີບສີແສດລ້ວນ ຯລຯ ໃສ່ເກີບສີຊົມພູລ້ວນ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຄືຄະລິຫັດຜູ້ບໍຣິໂພກກາມ"[1]

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ເກີບສີຂຽວລ້ວນ ຯລຯ. ບໍ່ເພິ່ງໃສ່ເກີບສີເຫຼືອງລ້ວນ ຯລຯ ບໍ່ເພິ່ງໃສ່ເກີບສີແດງລ້ວນ ຯລຯ ບໍ່ເພິ່ງໃສ່ ເກີບສີບານເຢັນລ້ວນ ຯລຯ ບໍ່ເພິ່ງໃສ່ເກີບສີດຳລ້ວນ ຯລຯ ບໍ່ເພິ່ງໃສ່ເກີບສີແສດລ້ວນ ຯລຯ ບໍ່ເພິ່ງໃສ່ເກີບສີຊົມພູລ້ວນ ອົງໃດໃສ່ ຕ້ອງອາບັດທຸກກົດ"

## ເລື້ອງຊົງຫ້າມໃຊ້ເກີບມີຫູສີຂຽວເປັນຕົ້ນ

ສະໄໝນັ້ນ ພວກພິກຂຸສັບພັກຄີໃສ່ເກີບມີຫູສີຂຽວ ຯລຯ. ໃສ່ເກີບມີຫູສີເຫຼືອງ ຯລຯ ໃສ່ເກີບມີຫູສີແດງ ຯລຯ ໃສ່ເກີບມີຫູສີບານເຢັນ ຯລຯ ໃສ່ເກີບມີຫູສີດຳ ຯລຯ ໃສ່ເກີບມີຫູສີແສດ

ຯລຯ ໃສ່ເກີບມີຫູສີຊົມພູ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຄືຄະລຶຫັດຜູ້ບໍຣິໂພກາກາມ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ເກີບມີຫູສີຂຽວ ຯລຯ ບໍ່ເພິ່ງໃສ່ເກີບມີຫູສີເຫຼືອງ ຯລຯ ບໍ່ເພິ່ງໃສ່ເກີບມີຫູສີແດງ ຯລຯ ບໍ່ເພິ່ງໃສ່ເກີບ ມີຫູສີບານເຢັນ ຯລຯ ບໍ່ເພິ່ງໃສ່ເກີບມີຫູສີດຳ ຯລຯ ບໍ່ເພິ່ງໃສ່ເກີບມີຫູສີແສດ ຯລຯ ບໍ່ເພິ່ງໃສ່ເກີບມີຫູສີຊົມພູ ອົງໃດໃສ່ ຕ້ອງອາບັດທຸກກົດ"

## ເລື້ອງຊົງຫ້າມໃຊ້ເກີບຫຸ້ມສົ້ນເປັນຕົ້ນ

ສະໄໝນັ້ນ ພວກພິກຂຸສັບພັກຄີໃສ່ເກີບຕິດແຜ່ນໜັງຫຸ້ມສົ້ນ ຯລຯ ໃສ່ເກີບຫຸ້ມແຂ່ງ ຯລຯ ໃສ່ເກີບປົກຫຼັງຕີນ ຯລຯ ໃສ່ເກີບຍັດນຸ່ນ ຯລຯ ໃສ່ເກີບມີຫູລາຍຄ້າຍຂົນປີກນົກກະທາ ຯລຯ ໃສ່ເກີບຫູງອນມີຮູບຊົງຄ້າຍເຂົາແກະ ຯລຯ ໃສ່ເກີບຫູງອນມີຮູບຊົງຄ້າຍເຂົາແບ້ ຯລຯ ໃສ່ເກີບຫູງອນມີຮູບຊົງຄ້າຍຫາງແມງງອດ ຯລຯ ໃສ່ເກີບທີ່ຫຍິບດ້ວຍຂົນນົກຍູງ ຯລຯ ໃສ່ເກີບງົດງາມວິຈິດ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຄືຄະລຶຫັດຜູ້ບໍຣິໂພກາກາມ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ເກີບຕິດແຜ່ນໜັງຫຸ້ມສົ້ນ ຯລຯ ບໍ່ເພິ່ງໃສ່ເກີບຫຸ້ມແຂ່ງ ຯລຯ ບໍ່ເພິ່ງໃສ່ເກີບປົກຫຼັງຕີນ ຯລຯ ບໍ່ເພິ່ງໃສ່ເກີບຍັດນຸ່ນ ຯລຯ ບໍ່ເພິ່ງໃສ່ເກີບມີຫູລາຍຄ້າຍຂົນປີກນົກກະທາ ຯລຯ ບໍ່ເພິ່ງໃສ່ເກີບຫູງອນມີຮູບຊົງຄ້າຍເຂົາແກະ ຯລຯ ບໍ່ເພິ່ງໃສ່ເກີບຫູງອນມີຮູບຊົງຄ້າຍເຂົາແບ້ ຯລຯ ບໍ່ເພິ່ງໃສ່ເກີບຫູງອນມີຮູບຊົງຄ້າຍຫາງແມງງອດ ຯລຯ ບໍ່ເພິ່ງໃສ່ເກີບທີ່ຫຍິບດ້ວຍຂົນນົກຍູງ ຯລຯ ບໍ່ເພິ່ງໃສ່ເກີບງົດງາມວິຈິດ ອົງໃດໃສ່ ຕ້ອງອາບັດທຸກກົດ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃສ່ເກີບຂິບດ້ວຍໜັງຣາດຊະສີ ຯລຯ ໃສ່ເກີບ ຂິບດ້ວຍໜັງເສືອໂຄ່ງ ຯລຯ ໃສ່ເກີບຂິບດ້ວຍໜັງເສືອເຫຼືອງ ຯລຯ ໃສ່ເກີບຂິບ ດ້ວຍໜັງເສືອດາວ ຯລຯ ໃສ່ເກີບຂິບດ້ວຍໜັງນາກ ຯລຯ ໃສ່ເກີບຂິບດ້ວຍໜັງແມວ ຯລຯ ໃສ່ເກີບຂິບດ້ວຍໜັງຄ່າງ ຯລຯ ໃສ່ເກີບຂິບດ້ວຍໜັງນົກເຄົ້າ ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຄືຄະລຶຫັດຜູ້ບໍຣິໂພກາກາມ" ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ເກີບຂິບດ້ວຍໜັງຣາດຊະສີ ຯລຯ ບໍ່ເພິ່ງໃສ່ເກີບຂິບດ້ວຍໜັງເສືອໂຄ່ງ ຯລຯ ບໍ່ເພິ່ງໃສ່ເກີບຂິບດ້ວຍໜັງເສືອເຫຼືອງ ຯລຯ ບໍ່ເພິ່ງໃສ່ເກີບຂິບດ້ວຍໜັງເສືອດາວ ຯລຯ ບໍ່ເພິ່ງໃສ່ເກີບຂິບດ້ວຍໜັງນາກ ຯລຯ ບໍ່ເພິ່ງ

ໃສ່ເກີບຂົນດ້ວຍໜັງແມວ ຯລຯ ບໍ່ເພິ່ງໃສ່ເກີບຂົນດ້ວຍໜັງຄ່າງ ຯລຯ ບໍ່ເພິ່ງໃສ່ເກີບຂົນດ້ວຍໜັງນົກເຄົ້າ ອົງໃດໃສ່ ຕ້ອງອາບັດທຸກກົດ

## ໑໕໐. ໂອມຸກກະຄຸນັງຄຸນຸປາຫະນານຸຊານນາ

## ວ່າດ້ວຍຊົງອະນຸຍາດເກີບຫຼາຍຊັ້ນທີ່ໃຊ້ແລ້ວ

## ເລື້ອງພິກຂຸຕີນແຕກ

[໔໕໗] ຄັ້ງນັ້ນ ໃນເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຖືບາດແລະຈີວອນ ສະເດັດເຂົ້າໄປບິນທະບາດໃນນະຄອນຣາດຊະຄຶ ມີພິກຂຸອົງໜຶ່ງເປັນປັດສາສະມະນະ ແຕ່ ພິກຂຸນັ້ນຍ່າງຂະໂຍງຕາມພຣະອົງໄປເບື້ອງພຣະປຣິດສະດາງ

ອຸປາສົກຄົນໜຶ່ງໃສ່ເກີບຫຼາຍຊັ້ນ ແນມເຫັນພຣະຜູ້ມີພຣະພາກເຈົ້າກຳລັງສະເດັດມາແຕ່ໄກ ຈຶ່ງປົດເກີບແລ້ວເຂົ້າໄປເຝົ້າ ຖວາຍອະພິວາດແລ້ວເຂົ້າໄປຫາພິກຂຸອົງນັ້ນໄຫວ້ແລ້ວຖາມວ່າ “ເປັນຫຍັງ ພຣະຜູ້ເປັນເຈົ້າຍ່າງຂະໂຍງຂ້ານ້ອຍ”

ພິກຂຸອົງນັ້ນຕອບວ່າ “ອຸປາສົກ ອາດຕະມາຕີນແຕກ”
ອຸປາສົກກ່າວວ່າ “ນິມົນພຣະຜູ້ເປັນເຈົ້າຮັບເກີບ ຂ້ານ້ອຍ”
ພິກຂຸຕອບວ່າ “ບໍ່ລະ ພຣະຜູ້ມີພຣະພາກເຈົ້າຊົງຫ້າມເກີບຫຼາຍຊັ້ນ”
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸ ທ່ານຮັບເກີບຄູ່ນັ້ນໄດ້”

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດເກີບຫຼາຍຊັ້ນທີ່ໃຊ້ແລ້ວ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ເກີບຫຼາຍຊັ້ນທີ່ຍັງໃໝ່ ອົງໃດໃສ່ ຕ້ອງອາບັດທຸກກົດ”

## ໑໕໑. ອັດຊາຣາມຸປາຫະນະປະຕິກເຂປະ

## ວ່າດ້ວຍຊົງຫ້າມໃສ່ເກີບໃນອາຣາມ

## ເລື້ອງພຣະສັບພັກຄີໃສ່ເກີບໃນອາຣາມ

[໔໕໘] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າບໍ່ຊົງສະຫຼອງພຣະບາດສະເດັດຈົງກົມຢູ່ໃນກາງແຈ້ງ ພິກຂຸຜູ້ເຖຣະທັງຫຼາຍຮູ້ວ່າ “ພຣະສາດສະດາບໍ່ຊົງສະຫຼອງພຣະບາດສະເດັດຈົງກົມຢູ່”

ຈຶ່ງບໍ່ໃສ່ເກີບຍ່າງຈົງກົມຄືກັນ ເມື່ອພຣະສາດສະດາບໍ່ຊົງສະຫຼອງພຣະບາດສະເດັດຈົງກົມ ເມື່ອເຫຼົ່າພິກຂຸຜູ້ເຖຣະບໍ່ໃສ່ເກີບຍ່າງຈົງກົມ ພວກພິກຂຸສັບພັກຄີກັບໃສ່ເກີບຍ່າງຈົງກົມ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີ ເມື່ອພຣະສາດສະດາບໍ່ຊົງສະຫຼອງພຣະບາດສະເດັດຈົງກົມ ເມື່ອພິກຂຸຜູ້ເຖຣະທັງຫຼາຍບໍ່ໃສ່ເກີບຍ່າງຈົງກົມຢູ່ ກັບໃສ່ເກີບຍ່າງຈົງກົມນໍ" ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າເມື່ອເຮົາຜູ້ສາດສະດາບໍ່ໃສ່ເກີບຍ່າງຈົງກົມ ເມື່ອພິກຂຸຜູ້ເຖຣະທັງຫຼາຍກໍບໍ່ໃສ່ເກີບຍ່າງຈົງກົມ ພວກພິກຂຸ ສັບພັກຄີໃສ່ເກີບຍ່າງຈົງກົມ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ຯລຯ ພິກຂຸທັງຫຼາຍ ເມື່ອເຮົາຜູ້ສາດສະດາບໍ່ໃສ່ເກີບຍ່າງຈົງກົມ ເມື່ອພິກຂຸຜູ້ເຖຣະທັງຫຼາຍກໍບໍ່ໃສ່ເກີບຍ່າງຈົງກົມ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງໃສ່ເກີບຍ່າງຈົງກົມນໍ ແທ້ຈິງພວກຄະລຶຫັດຜູ້ນຸ່ງຫົ່ມຜ້າຂາວ ກໍຍັງມີຄວາມເຄົາລົບຢຳເກງປະພຶດສະໝ່ຳສະເໝີໃນອາຈານ ຍ້ອນໄດ້ສຶກສາສິລະປະອັນເປັນເຄື່ອງລ້ຽງຊີວິດ ການທີ່ພວກທ່ານບວດໃນທຳວິໄນທີ່ເຮົາກ່າວດີແລ້ວແນວນີ້ ເພິ່ງມີຄວາມເຄົາລົບຢຳເກງປະພຶດສະໝ່ຳສະເໝີໃນອາຈານ ໃນພິກຂຸລຸ້ນອາຈານ ໃນອຸປັດຊາ ໃນພິກຂຸລຸ້ນອຸປັດຊາ ກໍຈະງົດງາມໃນທຳວິໄນນີ້ແນ່ ການກະທຳຂອງໂມຄະບຸຣຸດເຫຼົ່ານັ້ນບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເມື່ອອາຈານ ເມື່ອພິກຂຸລຸ້ນອາຈານ ເມື່ອອຸປັດຊາ ເມື່ອພິກຂຸລຸ້ນອຸປັດຊາ ບໍ່ໃສ່ເກີບຍ່າງຈົງກົມ ພິກຂຸບໍ່ເພິ່ງໃສ່ເກີບຍ່າງຈົງກົມ ອົງໃດໃສ່ຍ່າງຈົງກົມ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ອັນໜຶ່ງ ພິກຂຸບໍ່ເພິ່ງໃສ່ເກີບໃນອາຣາມ ອົງໃດໃສ່ ຕ້ອງອາບັດທຸກກົດ"

## ເລື້ອງພິກຂຸອາພາດເປັນໜໍ່ທີ່ຕີນ

[໘໘] ສະໄໝນັ້ນ ພິກຂຸອົງໜຶ່ງອາພາດເປັນໜໍ່ທີ່ຕີນ ພວກພິກຂຸຕ້ອງປະຄອງພິກຂຸນັ້ນໄປຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່

ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກຕາມເສນາສະນະ ທອດພຣະເນດເຫັນພວກພິກຂຸກຳລັງປະຄອງພິກຂຸອົງນັ້ນໄປຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່ ຈຶ່ງສະເດັດເຂົ້າໄປຫາພິກຂຸເຫຼົ່ານັ້ນ ແລ້ວໄດ້ຕັດກັບພິກຂຸເຫຼົ່ານັ້ນ ດັ່ງນີ້ວ່າ "ພິກຂຸທັງຫຼາຍ ພິກຂຸນີ້ອາພາດເປັນອັນໃດ"

ພິກຂຸທັງຫຼາຍຂາບທູນວ່າ "ທ່ານອົງນີ້ອາພາດເປັນໜໍ່ທີ່ຕີນ ພວກຂ້າອົງຕ້ອງປະຄອງທ່ານໄປຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່ ຂ້ານ້ອຍ"

ລໍາດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທໍາມີກະຖາຍ້ອນເລື່ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ມີຕີນເຈັບ ຕີນແຕກ ຫຼືອາພາດເປັນໜໍ່ທີ່ຕີນໃສ່ເກີບໄດ້"

ສະໄໝນັ້ນ ພິກຂຸທັງຫຼາຍບໍ່ລ້າງຕີນຂຶ້ນຕຽງແດ່ ຕັ່ງແດ່ ຈີວອນແລະເສນາສະນະຈຶ່ງເປິເປື້ອນ

ພິກຂຸທັງຫຼາຍ ຈຶ່ງນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃສ່ເກີບໃນຂະນະທີ່ຕັ້ງໃຈວ່າ ບຶດດຽວຈະຂຶ້ນຕຽງ ຫຼື ຕັ່ງ"

ສະໄໝນັ້ນ ເວລາກາງຄືນ ພິກຂຸທັງຫຼາຍຍ່າງໄປໂຮງອຸໂປສົດແດ່ ທີ່ປະຊຸມແດ່ ຢຽບຕໍໄມ້ແດ່ ໜາມແດ່ໃນບ່ອນມືດ ຕີນທັງສອງບາດເຈັບ ພິກຂຸທັງຫຼາຍ ຈຶ່ງນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃສ່ເກີບ ໃຊ້ຄົບເພີງປະທີບ ໄມ້ການເທົ້າໃນອາຣາມ"

## ໑໕໘. ກັດຖະປາທຸກາທິປະຕິກເຂປະ

## ວ່າດ້ວຍຊົງຫ້າມໃສ່ຊຽງຕີນໄມ້ເປັນຕົ້ນ

## ເລື່ອງພຣະສັບພັກຄີໃສ່ຊຽງຕີນໄມ້

[໒໕໐] ສະໄໝນັ້ນ ໃນເວລາເຊົ້າມືດ ພວກພິກຂຸສັບພັກຄີລຸກຂຶ້ນໃສ່ຊຽງຕີນໄມ້ຍ່າງຈົງກົມໃນບ່ອນກາງແຈ້ງ ມີສຽງກີກກັກ ດັງອຶກກະທຶກ ສົນທະນາເດຍຣັດສານກະຖາຕ່າງ ໆ ຄື

໑. ຣາຊະກະຖາ ເລື່ອງພຣະຣາຊາ
໒. ໂຈຣະກະຖາ ເລື່ອງໂຈນ
໓. ມະຫາມັດຕະກະຖາ ເລື່ອງມະຫາອໍາໝາດ
໔. ເສນາກະຖາ ເລື່ອງກອງທັບ
໕. ພະຍະກະຖາ ເລື່ອງໄພ
໖. ຍຸດທະກະຖາ ເລື່ອງການຮົບ
໗. ອັນນະກະຖາ ເລື່ອງເຂົ້າ

໗. ປານະກະຖາ ເລື້ອງນ້ຳດື່ມ
໘. ວັດຖະກະຖາ ເລື້ອງຜ້າ
໑໐. ສະຍະນະກະຖາ ເລື້ອງບ່ອນນອນ
໑໑. ມາລາກະຖາ ເລື້ອງພວງດອກໄມ້
໑໒. ຄັນທະກະຖາ ເລື້ອງຂອງຫອມ
໑໓. ຍາຕິກະຖາ ເລື້ອງຍາດ
໑໔. ຍານະກະຖາ ເລື້ອງຍານ
໑໕. ຄາມະກະຖາ ເລື້ອງບ້ານ
໑໖. ນິຄະມະກະຖາ ເລື້ອງນິຄົມ
໑໗. ນະຄະຣະກະຖາ ເລື້ອງເມືອງ
໑໗. ຊະນະປະທະກະຖາ ເລື້ອງຊົນນະບົດ
໑໘. ອິດຖີກະຖາ ເລື້ອງສະຕີ
໒໐. ປຸຣິສະກະຖາ ເລື້ອງບຸຣຸດ
໒໑. ສູຣະກະຖາ ເລື້ອງຄົນກ້າຫານ
໒໒. ວິສິຂາກະຖາ ເລື້ອງຮ່ອມ
໒໓. ກຸມພັດຖານະກະຖາ ເລື້ອງທ່ານ້ຳ
໒໔. ປຸບພະເປຕະກະຖາ ເລື້ອງຄົນທີ່ລ່ວງລັບໄປແລ້ວ
໒໕. ນານັດຕະກະຖາ ເລື້ອງຕ່າງ ໆ
໒໖. ໂລກັກຂາຍິກະ ເລື້ອງໂລກ
໒໗. ສະມຸດທັກຂາຍິກະ ເລື້ອງທະເລ
໒໗. ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ

ຢຽບແມງຕາຍແດ່ ເຮັດພິກຂຸທັງຫຼາຍໃຫ້ຄາດເຄື່ອນຈາກສະມາທິແດ່

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພວກພິກຂຸສັບພັກຄີຈຶ່ງລຸກຂຶ້ນໃນເວລາເຊົ້າມືດ ໃສ່ຊຽງຕີນໄມ້ ຍ່າງຈົ່ງກົນໃນບ່ອນກາງແຈ້ງ ມີສຽງກຶກກັກ ດັງອຶກກະທຶກ ສົນທະນາເດຍຣັດສານກະຖາຕ່າງ ໆ ຄື

໑. ຣາຊະກະຖາ ເລື້ອງພຣະຣາຊາ ໒. ໂຈນກະຖາ ເລື້ອງໂຈນ

ຯລຯ

໒໗. ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ

ຢຽບແມງຕາຍແດ່ ເຮັດພິກຂຸທັງຫຼາຍໃຫ້ຄາດເຄື່ອນຈາກສະມາທິແດ່ນໍ" ແລ້ວຈຶ່ງ ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸສັບພັກຄີ ລຸກຂຶ້ນໃນເວລາເຊົ້າມືດ ໃສ່ຊຽງຕີນໄມ້ຍ່າງຈົງກົມໃນບ່ອນກາງແຈ້ງ ມີສຽງກຶກກັກ ດັ່ງອຶກກະທຶກ ສົນທະນາເດຍຣັດສານກະຖາຕ່າງ ໆ ຄື

໑. ຣາຊະກະຖາ ເລື້ອງພຣະຣາຊາ ຯລຯ ໘. ໂຈນກະຖາ ເລື້ອງໂຈນ ຯລຯ

໓໒. ອິຕິພະວາພະວະກະຖາ ເລື້ອງຄວາມຈະເລີນແລະຄວາມເສື່ອມ

ຢຽບແມງຕາຍແດ່ ເຮັດພິກຂຸທັງຫຼາຍໃຫ້ຄາດເຄື່ອນຈາກສະມາທິແດ່ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າ ຯລຯ ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ຊຽງຕີນໄມ້ ອົງໃດໃສ່ ຕ້ອງອາບັດທຸກກົດ"

## ເລື້ອງຊຽງຕີນໃບຕານ

ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນຣາດຊະຄືຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນພາຣານະສີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນພາຣານະສີແລ້ວ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າອິສິປະຕະນະມະລິຄະທາຍະວັນໃນນະຄອນພາຣານະສີນັ້ນ

ສະໄໝນັ້ນ ພວກພິກຂຸສັບພັກຄີໄດ້ປຶກສາກັນວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມຊຽງຕີນໄມ້" ຈຶ່ງໃຫ້ຕັດຕົ້ນຕານອ່ອນ ແລ້ວໃຊ້ໃບຕານມາເຮັດຊຽງຕີນໃສ່ ຕົ້ນຕານອ່ອນທີ່ຖືກຕັດນັ້ນ ໆ ຍ່ອມຫ່ຽວແຫ້ງ

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງໃຫ້ຕັດຕົ້ນຕານອ່ອນ ໃຊ້ໃບຕານເຮັດຊຽງຕີນໃສ່ນໍ ຕົ້ນຕານອ່ອນທີ່ຖືກຕັດນັ້ນ ໆ ຍ່ອມຫ່ຽວແຫ້ງ ພຣະສະມະນະເຊື້ອສາຍສາກະຍະບຸດບຽດບຽນສິ່ງມີຊີວິດເຊິ່ງມີອິນຊີດຽວ"

ພິກຂຸທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸສັບພັກຄີໃຫ້ຕັດຕົ້ນຕານອ່ອນ ນຳໃບຕານມາເຮັດຊຽງຕີນໃສ່ ຕົ້ນຕານອ່ອນທີ່ຖືກຕັດນັ້ນ ໆ ຍ່ອມຫ່ຽວແຫ້ງໄປແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງໃຫ້ຕັດຕົ້ນຕານອ່ອນ ໃຊ້ໃບຕານມາເຮັດຊຽງຕີນໃສ່ນໍ ຕົ້ນຕານອ່ອນ ທີ່ຖືກຕັດນັ້ນ ໆ ຍ່ອມຫ່ຽວແຫ້ງໄປ ພິກຂຸທັງຫຼາຍ ຍ້ອນຄົນທັງຫຼາຍມີຄວາມສຳຄັນວ່າຕົ້ນໄມ້ມີຊີວິດ ພິກຂຸທັງຫຼາຍ ການກະທຳຂອງໂມຄະບຸຣຸດນັ້ນ ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ຊຽງຕີນໃບຕານ ອົງໃດໃສ່ ຕ້ອງອາບັດທຸກກົດ"

## ເລື້ອງຊຽງຕີນສານດ້ວຍໃບໄຜ່

ສະໄໝນັ້ນ ພວກພິກຂຸສັບພັກຄີໄດ້ປຶກສາກັນວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມຊຽງຕີນໃບຕານ" ຈຶ່ງໃຫ້ຕັດໄມ້ໄຜ່ອ່ອນ ແລ້ວໃຊ້ໃບໄຜ່ມາເຮັດຊຽງຕີນໃສ່ ໄມ້ໄຜ່ອ່ອນທີ່ຖືກຕັດນັ້ນ ໆ ຍ່ອມຫ່ຽວແຫ້ງ

ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງໃຫ້ຕັດໄມ້ໄຜ່ອ່ອນ ໃຊ້ໃບໄຜ່ມາເຮັດຊຽງຕີນໃສ່ນໍ ໄມ້ໄຜ່ອ່ອນທີ່ຖືກຕັດນັ້ນ ໆ ຍ່ອມຫ່ຽວແຫ້ງໄປ ພຣະສະມະນະເຊື້ອສາຍສາກະຍະບຸດບຽດບຽນສິ່ງມີຊີວິດເຊິ່ງມີອິນຊີດຽວ"

ພິກຂຸທັງຫຼາຍໄດ້ຍິນຄົນທັງຫຼາຍຕຳໜິ ປະນາມ ໂພນທະນາ ຯລຯ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ຊຽງຕີນໃບໄຜ່ ອົງໃດໃສ່ ຕ້ອງອາບັດທຸກກົດ"

## ເລື້ອງຊຽງຕີນສານດ້ວຍຫຍ້າສາມັນ

[໒໕໑] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນພາຣານະສີຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປເມືອງພັດທິຍະ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງເມືອງພັດທິຍະແລ້ວ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າຊາຕິຍາວັນ ໃນເມືອງພັດທິຍະນັ້ນ

ສະໄໝນັ້ນ ພວກພິກຂຸຊາວເມືອງພັດທິຍະ ຂົນຂວາຍຕົກແຕ່ງຊຽງຕີນຫຼາຍຊະນິດ ຄືເຮັດຊຽງຕີນຫຍ້າ (ສາມັນ) ເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າມຸ້ງກະຕ່າຍເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າປ້ອງເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນໃບເປັ້ງເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າແຝກເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຂົນສັດເອງແດ່ ໃຊ້ໃຫ້ເຮັດແດ່ ປະຖິ້ມອຸດເທດ ປະຣິປຸດສາ ອະທິສີນ ອະທິຈິດ ອະທິປັນຍາ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພວກພິກຂຸຊາວເມືອງພັດທິຍະ ຈຶ່ງຂຶ້ນຂວາຍຕົກແຕ່ງຊຽງຕີນຫຼາຍຊະນິດ ຄື ເຮັດຊຽງຕີນຫຍ້າ (ສາມັນ) ເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າມຸ້ງກະຕ່າຍເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າປ້ອງເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນໃບເປົ້ງເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າແຝກເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຂົນສັດເອງແດ່ ໃຊ້ໃຫ້ເຮັດແດ່ ປະຖິ້ມອຸດເທດ ປະຣິປຸດສາ ອະທິສີນ ອະທິຈິດ ອະທິ ປັນຍາ ແນວນັ້ນນໍ”

ລຳດັບນັ້ນ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸຊາວເມືອງພັດທິຍະ ຂຶ້ນຂວາຍຕົກແຕ່ງຊຽງຕີນຫຼາຍຊະນິດ ຄື ເຮັດຊຽງຕີນຫຍ້າ (ສາມັນ) ເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າມຸ້ງກະຕ່າຍເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າປ້ອງເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນໃບເປົ້ງເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າແຝກເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຂົນສັດເອງແດ່ ໃຊ້ໃຫ້ເຮັດແດ່ ປະຖິ້ມອຸດເທດ ປະຣິປຸດສາ ອະທິສີນ ອະທິຈິດ ອະທິປັນຍາ ແມ່ນບໍ?”

ພິກຂຸທັງຫຼາຍທູນຮັບວ່າ “ເປັນຄວາມຈິງ ຂ້ານ້ອຍ”

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ຯລຯ ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນຈຶ່ງຂຶ້ນຂວາຍຕົກແຕ່ງຊຽງຕີນຫຼາຍຊະນິດ ຄື ເຮັດຊຽງຕີນຫຍ້າ (ສາມັນ) ເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າມຸ້ງກະຕ່າຍເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າປ້ອງເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນໃບເປົ້ງເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຫຍ້າແຝກເອງແດ່ ໃຊ້ໃຫ້ເຮັດແດ່ ເຮັດຊຽງຕີນຂົນສັດເອງແດ່ ໃຊ້ໃຫ້ເຮັດແດ່ ປະຖິ້ມອຸດເທດ ປະຣິປຸດສາ ອະທິສີນ ອະທິຈິດ ອະທິປັນຍາ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ” ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາ ຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ຊຽງຕີນຫຍ້າ (ສາມັນ) ຯລຯ ບໍ່ເພິ່ງໃສ່ຊຽງຕີນຫຍ້າມຸ້ງກະຕ່າຍ ຯລຯ ບໍ່ເພິ່ງໃສ່ຊຽງຕີນຫຍ້າປ້ອງ ຯລຯ ບໍ່ເພິ່ງໃສ່ຊຽງຕີນໃບເປົ້ງ ຯລຯ ບໍ່ເພິ່ງໃສ່ຊຽງຕີນຫຍ້າແຝກ ຯລຯ ບໍ່ເພິ່ງໃສ່ຊຽງຕີນຂົນສັດ ຯລຯ ບໍ່ເພິ່ງໃສ່ຊຽງຕີນປະດັບດ້ວຍຄຳ ຯລຯ ບໍ່ເພິ່ງໃສ່ຊຽງຕີນປະດັບດ້ວຍເງິນ ຯລຯ ບໍ່ເພິ່ງໃສ່ຊຽງຕີນປະດັບດ້ວຍແກ້ວມະນີ ຯລຯ ບໍ່ເພິ່ງໃສ່ຊຽງຕີນປະດັບດ້ວຍແກ້ວໄພທູນ ຯລຯ ບໍ່ເພິ່ງໃສ່ຊຽງຕີນປະດັບດ້ວຍແກ້ວຜລຶກ ຯລຯ ບໍ່ເພິ່ງໃສ່ຊຽງຕີນປະດັບດ້ວຍສຳຣິດ ຯລຯ ບໍ່ເພິ່ງໃສ່ຊຽງຕີນປະດັບດ້ວຍແກ້ວ ຯລຯ ບໍ່ເພິ່ງໃສ່ຊຽງຕີນເຮັດດ້ວຍດີບຸກ ຯລຯ ບໍ່ເພິ່ງໃສ່ຊຽງຕີນເຮັດດ້ວຍສັງກະສີ ຯລຯ ບໍ່ເພິ່ງໃສ່ຊຽງຕີນເຮັດດ້ວຍທອງແດງ ອົງໃດໃສ່ ຕ້ອງອາບັດທຸກກົດ

ອັນໜຶ່ງ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ຊຽງຕີນຊະນິດທີ່ຕ້ອງໃສ່ຍ່າງ ອົງໃດໃສ່ ຕ້ອງອາບັດທຸກາກົດ ພິກຂຸທັງຫຼາຍ ເຮົາອະນຸຍາດຊຽງຕີນທີ່ຕິງຢູ່ກັບທີ່ ບໍ່ໃຊ້ໃສ່ຍ່າງ ໓ ຊະນິດ ຄື ຊຽງຕີນສຳລັບໃຊ້ໃນບ່ອນທີ່ຖ່າຍອຸດຈາຣະ ຊຽງຕີນສຳລັບໃຊ້ໃນບ່ອນທີ່ຖ່າຍ ປັດສາວະ ຊຽງຕີນສຳລັບໃຊ້ໃນບ່ອນຊຳຣະ"

## ເລື້ອງພຣະສັບພັກຄີຈັບງົວແມ່

[໘໕໘] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເມືອງພັດທິຍະຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນສາວັດຖີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນສາວັດຖີແລ້ວ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຮາມຂອງອະນາຖະບິນດິກະເສດຖີ ໃນນະຄອນສາວັດຖີນັ້ນ

ສະໄໝນັ້ນ ພວກພິກຂຸສັບພັກຄີຈັບງົວແມ່ທີ່ກຳລັງຂ້າມແມ່ນ້ຳອະຈິຣະວະດີທີ່ເຂົາແດ່ ຈັບທີ່ຫູແດ່ ຈັບທີ່ຄໍແດ່ ຈັບທີ່ຫາງແດ່ ຂຶ້ນຂີ່ຫຼັງແດ່ ມີຄວາມກຳໜັດຈັບອົງກຳເນີດແດ່ ກົດງົວນ້ອຍຈົນຈົມນ້ຳຕາຍແດ່

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍພຣະສາກະຍະບຸດຈຶ່ງຈັບງົວແມ່ທີ່ກຳລັງຂ້າມແມ່ນ້ຳອະຈິຣະວະດີທີ່ເຂົາແດ່ ຈັບທີ່ຫູແດ່ ຈັບທີ່ຄໍແດ່ ຈັບທີ່ຫາງແດ່ ຂຶ້ນຂີ່ຫຼັງແດ່ ມີຄວາມກຳໜັດຈັບອົງກຳເນີດແດ່ ກົດງົວນ້ອຍຈົນຈົມນ້ຳຕາຍແດ່ ຄືຄະລືຫັດຜູ້ບໍຣິໂພກກາມແນວນັ້ນນໍ"

ພິກຂຸທັງຫຼາຍໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ຯລຯ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸສັບພັກຄີຈັບງົວແມ່ທີ່ກຳລັງຂ້າມແມ່ນ້ຳອະຈິຣະວະດີທີ່ເຂົາແດ່ ຈັບທີ່ຫູແດ່ ຈັບທີ່ຄໍແດ່ ຈັບທີ່ຫາງແດ່ ຂຶ້ນຂີ່ຫຼັງແດ່ ມີຄວາມກຳໜັດຈັບອົງກຳເນີດແດ່ ກົດງົວນ້ອຍຈົນຈົມນ້ຳຕາຍແດ່ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າ ຯລຯ ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຈັບງົວແມ່ທັງຫຼາຍທີ່ເຂົາ ອົງໃດຈັບ ຕ້ອງອາບັດທຸກາກົດຯລຯ ບໍ່ເພິ່ງຈັບທີ່ຫູ ຯລຯ ບໍ່ເພິ່ງຈັບທີ່ຄໍ ຯລຯ ບໍ່ເພິ່ງຈັບທີ່ຫາງ ຯລຯ ບໍ່ເພິ່ງຂຶ້ນຂີ່ຫຼັງ ອົງໃດຂຶ້ນຂີ່ຫຼັງ ຕ້ອງອາບັດທຸກາກົດ ພິກຂຸທັງຫຼາຍ ພິກຂຸມີຈິດກຳໜັດບໍ່ເພິ່ງຈັບອົງກຳເນີດ

(ງົວແມ່) ອົງໃດຈັບ ຕ້ອງອາບັດຖຸນລັດໄຈ ພິກຂຸບໍ່ເພິ່ງຂ້າງົວນ້ອຍ ອົງໃດຂ້າ ເພິ່ງປັບອາບັດຕາມທຳ"

## ໑໕໓. ຍານາທິປະຕິກເຂປະ

### ວ່າດ້ວຍຊົງຫ້າມຍານພາຫະນະເປັນຕົ້ນ

### ເລື້ອງພຣະສັບພັກຄີໂດຍສານຍານພາຫະນະແລະພິກຂຸເປັນໄຂ້

[໔໕໓] ສະໄໝນັ້ນ ພວກພິກຂຸສັບພັກຄີໂດຍສານຍານພາຫະນະທຽມດ້ວຍງົວແມ່ ມີບຸຣຸດເປັນສາຣະຖີແດ່ ທຽມດ້ວຍງົວເຖິກມີສະຕີເປັນສາຣະຖີແດ່

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຄືຊາຍໜຸ່ມຍິງສາວໂດຍສານຍານພາຫະນະໄປຫຼິ້ນນ້ຳໃນແມ່ນ້ຳຄົງຄາແລະແມ່ນ້ຳມະຮີ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໂດຍສານຍານພາຫະນະ ອົງໃດໂດຍສານ ຕ້ອງອາບັດທຸກກົດ"

ຕໍ່ມາ ພິກຂຸອົງໜຶ່ງເດີນທາງໄປນະຄອນສາວັດຖີ ໃນແຄວ້ນໂກສົນ ເພື່ອຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າເປັນໄຂ້ໃນລະຫວ່າງທາງ ຈຶ່ງແວ່ໄປນັ່ງຢູ່ທີ່ເຫງົ້າໄມ້ຕົ້ນໜຶ່ງ ຄົນທັງຫຼາຍ ພົບພິກຂຸອົງນັ້ນຈຶ່ງຖາມວ່າ "ພຣະຜູ້ເປັນເຈົ້າຈະໄປໄສ ຂ້ານ້ອຍ"

ພິກຂຸຕອບວ່າ "ທ່ານທັງຫຼາຍ ອາດຕະມາຈະໄປນະຄອນສາວັດຖີເພື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ"

ຄົນເຫຼົ່ານັ້ນກ່າວວ່າ "ນິມົນມາເທີ້ນ ພຣະຜູ້ເປັນເຈົ້າ ເຮົາຈະໄປດ້ວຍກັນ"

ພິກຂຸຕອບວ່າ "ອາດຕະມາເປັນໄຂ້ ໄປບໍ່ໄດ້"

ຄົນທັງຫຼາຍກ່າວວ່າ "ນິມົນມາຂຶ້ນຍານພາຫະນະເທີ້ນ ພຣະຜູ້ເປັນເຈົ້າ"

ພິກຂຸຕອບວ່າ "ຢ່າເລີຍ ພຣະຜູ້ມີພຣະພາກເຈົ້າຊົງຫ້າມໂດຍສານຍານພາຫະນະ" ຢຳເກງຢູ່ ບໍ່ຍອມຂຶ້ນຍານ ພໍໄປເຖິງນະຄອນສາວັດຖີຈຶ່ງບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍ ວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຍານຍານພາຫະນະສຳລັບພິກຂຸຜູ້ເປັນໄຂ້"

## ເລື່ອງຍານພາຫະນະທຽມດ້ວຍງົວເຖິກແລະຍານພາຫະນະທີ່ໃຊ້ມືລາກ

ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ມີການສົນທະນາກັນດັ່ງນີ້ວ່າ "ຍານພາຫະນະທີ່ຊົງອະນຸຍາດນັ້ນທຽມງົວແມ່ ຫຼື ງົວເຖິກ"

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຍານພາຫະນະທີ່ທຽມງົວເຖິກ[១] ຍານພາຫະນະທີ່ໃຊ້ມືລາກ"

## ເລື້ອງຄານຫາມ

ສະໄໝນັ້ນ ພິກຂຸອົງໜຶ່ງບໍ່ສະບາຍຢ່າງໜັກ ຍ້ອນຍານພາຫະນະກະເທືອນ

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດວໍ (ແລະ) ເປຫາມ"

## ໑໕໔. ອຸດຈາສະຍະນະມະຫາສະຍະນາປະຕິກເຂປະ

## ວ່າດ້ວຍຊົງຫ້າມບ່ອນນອນສູງໃຫຍ່

## ເລື້ອງພຣະສັບພັກຄີໃຊ້ບ່ອນນອນສູງໃຫຍ່

[໒໕໔] ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ບ່ອນນອນສູງໃຫຍ່[១] ຄື

໑. ຕຽງມີຕີນສູງເກີນຂະໜາດ
໒. ຕຽງມີຕີນເປັນຮູບສັດຮ້າຍ
໓. ພົມຂົນສັດ
໔. ເຄື່ອງປູລາດຂົນແກະລາຍວິຈິດ
໕. ເຄື່ອງປູລາດຂົນແກະສີຂາວ
໖. ເຄື່ອງປູລາດມີຮູບດອກໄມ້
໗. ເຄື່ອງປູລາດຍັດນຸ່ນ
໘. ເຄື່ອງປູລາດຂົນແກະວິຈິດດ້ວຍຮູບ ສັດຮ້າຍ ເຊັ່ນຣາດຊະສີແລະເສືອ
໙. ເຄື່ອງປູລາດຂົນແກະມີຂົນ ໒ ດ້ານ
໑໐. ເຄື່ອງປູລາດຂົນແກະມີຂົນດ້ານດຽວ
໑໑. ເຄື່ອງປູລາດແສ່ວດ້ວຍໄໝປະດັບຣັດຕະນະ

໑໔. ເຄື່ອງປູລາດຜ້າໄໝປະດັບຣັດຕະນະ
໑໓. ເຄື່ອງປູລາດຂົນແກະຂະໜາດໃຫຍ່ທີ່ນາງ
໑໔. ເຄື່ອງປູລາດເທິງຫຼັງຊ້າງ ຟ້ອນ ໑໖ ຄົນລ່າຍລຳໄດ້
໑໕. ເຄື່ອງປູລາດເທິງຫຼັງມ້າ
໑໖. ເຄື່ອງປູລາດໃນລົດ
໑໗. ເຄື່ອງປູລາດເຮັດດ້ວຍໜັງເສືອດາວ
໑໘. ເຄື່ອງປູລາດໜັງຊະມົດ
໑໙. ເຄື່ອງປູລາດມີເພດານ
໔໐. ເຄື່ອງປູລາດມີໝອນ ໔ ຂ້າງ

ຄົນທັງຫຼາຍຍ່າງທ່ຽວໄປຕາມວິຫານພົບເຫັນ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຄື ຄະລຶຫັດຜູ້ບໍລິໂພກກາມ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ບ່ອນນອນສູງໃຫຍ່ ຄື

໑. ຕຽງມີຕີນສູງເກີນຂະໜາດ
໔. ຕຽງມີຕີນເປັນຮູບສັດຮ້າຍ
໓. ພົມຂົນສັດ
໔. ເຄື່ອງປູລາດຂົນແກະລາຍວິຈິດ
໕. ເຄື່ອງປູລາດຂົນແກະສີຂາວ
໖. ເຄື່ອງປູລາດມີຮູບດອກໄມ້
໗. ເຄື່ອງປູລາດຍັດນຸ່ນ
໘. ເຄື່ອງປູລາດຂົນແກະວິຈິດດ້ວຍຮູບ ສັດຮ້າຍ ເຊັ່ນຣາດຊະສີແລະເສືອ
໙. ເຄື່ອງປູລາດຂົນແກະມີຂົນ ໔ ດ້ານ
໑໐. ເຄື່ອງປູລາດຂົນແກະມີຂົນດ້ານດຽວ
໑໑. ເຄື່ອງປູລາດແສ່ວດ້ວຍໄໝປະດັບຣັດຕະນະ
໑໔. ເຄື່ອງປູລາດຜ້າໄໝປະດັບຣັດຕະນະ
໑໓. ເຄື່ອງປູລາດຂົນແກະຂະໜາດໃຫຍ່ທີ່ນາງ
໑໔. ເຄື່ອງປູລາດເທິງຫຼັງຊ້າງ ຟ້ອນ ໑໖ ຄົນຟ້ອນໄດ້
໑໕. ເຄື່ອງປູລາດເທິງຫຼັງມ້າ
໑໖. ເຄື່ອງປູລາດໃນລົດ
໑໗. ເຄື່ອງປູລາດເຮັດດ້ວຍໜັງເສືອດາວ

໑໙. ເຄື່ອງປູລາດໜັງຊະມົດ
໑໙. ເຄື່ອງປູລາດມີເພດານ
໔໐. ເຄື່ອງປູລາດມີໝອນ ໔ ຂ້າງ

ອົງໃດໃຊ້ ຕ້ອງອາບັດທຸກກົດ"

# ໑໘໘. ສັບພະຈຳມະປະຕິກເຂປະ

## ວ່າດ້ວຍຊົງຫ້າມແຜ່ນໜັງ

## ເລື້ອງພຣະສັບພັກຄີໃຊ້ໜັງຜືນໃຫຍ່

[໔໘໘] ສະໄໝນັ້ນ ພວກພິກຂຸສັບພັກຄີຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມບ່ອນນອນສູງໃຫຍ່" ຈຶ່ງໃຊ້ໜັງຜືນໃຫຍ່ ຄື ໜັງສີຫະ ໜັງເສືອໂຄ່ງ ໜັງເສືອເຫຼືອງ ແຜ່ນໜັງເຫຼົ່ານັ້ນຕັດຕາມຂະໜາດຕຽງແດ່ ຕັດຕາມຂະໜາດຕັ່ງແດ່ ປູລາດໄວ້ພາຍໃນຕຽງແດ່ ປູລາດໄວ້ພາຍນອກຕຽງແດ່ ປູລາດໄວ້ພາຍໃນຕັ່ງແດ່ ປູລາດໄວ້ພາຍນອກຕັ່ງແດ່

ຄົນທັງຫຼາຍຍ່າງທ່ຽວໄປຕາມວິຫານພົບເຂົ້າ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຄືຄະລືຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ໜັງຜືນໃຫຍ່ ຄື ໜັງສີຫະໜັງເສືອໂຄ່ງ ໜັງເສືອເຫຼືອງ ອົງໃດໃຊ້ ຕ້ອງອາບັດທຸກກົດ"

ຕໍ່ມາ ພວກພິກຂຸສັບພັກຄີຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມໜັງຜືນໃຫຍ່" ຈຶ່ງໃຊ້ ໜັງງົວ ຕັດຕາມຂະໜາດຕຽງແດ່ ຕັດຕາມຂະໜາດຕັ່ງແດ່ ປູລາດໄວ້ພາຍໃນຕຽງແດ່ ປູລາດໄວ້ພາຍນອກຕຽງແດ່ ປູລາດໄວ້ພາຍໃນຕັ່ງແດ່ ປູລາດໄວ້ພາຍນອກຕັ່ງແດ່

## ເລື້ອງພິກຂຸໃຈບາບຂໍໜັງງົວນ້ອຍ

ມີພິກຂຸໃຈບາບອົງໜຶ່ງເປັນພຣະໃກ້ຊິດຕະກູນຂອງອຸປາສົກໃຈບາບຄົນໜຶ່ງ ເຊົ້າມື້ໜຶ່ງພິກຂຸນັ້ນຄອງອັນຕະຣະວາສົກ ຖືບາດແລະຈີວອນຍ່າງໄປເຮືອນຂອງອຸປາສົກນັ້ນ ນັ່ງເທິງອາສະນະທີ່ເຂົາຈັດໄວ້

ລຳດັບນັ້ນ ອຸປາສິກາໃຈບາບນັ້ນເຂົ້າໄປຫາພິກຂຸໃຈບາບ ເຖິງອາສະນະໄຫວ້ແລ້ວນັ່ງລົງທີ່ສົມຄວນ ອຸປາສິກາໃຈບາບນັ້ນມີງົວນ້ອຍຮູບຮ່າງງົດງາມ ໜ້າເບິ່ງ ໜ້າຊົມ ຄ້າຍລູກເສືອເຫຼືອງ ພິກຂຸໃຈບາບນັ້ນຈຶ່ງແນມງົວນ້ອຍນັ້ນດ້ວຍຄວາມສົນໃຈ

ອຸປາສິກາຖາມພິກຂຸວ່າ "ພຣະຜູ້ເປັນເຈົ້າ ທ່ານແນມເບິ່ງງົວນ້ອຍຢ່າງສົນໃຈ ເພື່ອອັນໃດກັນ"

ພິກຂຸຕອບວ່າ "ອຸປາສິກາ ອາດຕະມາຢາກໄດ້ໜັງຂອງມັນ"

ເຂົາຈຶ່ງຂ້າງົວນ້ອຍແລ້ວລອກໜັງມາຖວາຍພິກຂຸໃຈບາບນັ້ນ ລຳດັບນັ້ນ ພິກຂຸໃຈບາບນັ້ນໃຊ້ສັງຄາຕິຫໍ່ໜັງຍ່າງຈາກໄປ ແມ່ງົວຈຶ່ງຍ່າງນຳພິກຂຸຍ້ອນຄວາມຮັກລູກ

ພິກຂຸທັງຫຼາຍ ຖາມພິກຂຸໃຈບາບນັ້ນວ່າ "ເປັນຫຍັງງົວແມ່ຈຶ່ງຍ່າງນຳທ່ານບໍ"

ພິກຂຸນັ້ນຕອບວ່າ "ຂ້ານ້ອຍເອງກໍບໍ່ຮູ້ວ່າ ມັນຍ່າງນຳມາຍ້ອນເຫດໃດ"

ພໍດີສັງຄາຕິຂອງພິກຂຸໃຈບາບນັ້ນເປື້ອນເລືອດ ພິກຂຸທັງຫຼາຍ ຈຶ່ງກ່າວແນວນີ້ວ່າ "ສັງຄາ ຕິຜືນນີ້ທ່ານຫໍ່ອັນໃດໄວ້"

ພິກຂຸນັ້ນຈຶ່ງບອກເລື້ອງນັ້ນໃຫ້ພິກຂຸທັງຫຼາຍຮູ້

ພວກພິກຂຸຖາມວ່າ "ທ່ານຊັກຊວນໃຫ້ຂ້າສັດບໍ"

ພິກຂຸນັ້ນກ່າວວ່າ "ແນວນັ້ນ ທ່ານທັງຫຼາຍ"

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸຈຶ່ງຊັກຊວນໃຫ້ຂ້າສັດບໍ ພຣະຜູ້ມີພຣະພາກເຈົ້າຊົງຕຳໜິການຂ້າສັດ ຊົງສັນເສີນການງົດເວັ້ນຈາກການຂ້າສັດບໍ່ແມ່ນບໍ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

## ເລື້ອງຊົງຫ້າມໃຊ້ໜັງງົວເປັນຕົ້ນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸໃຈບາບອົງນັ້ນວ່າ "ພິກຂຸ ຮູ້ວ່າທ່ານຊັກຊວນໃຫ້ຂ້າສັດ ແມ່ນບໍ?"

ພິກຂຸນັ້ນທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ເປັນຫຍັງ ທ່ານຈຶ່ງຊັກຊວນໃຫ້ຂ້າສັດແນວນັ້ນບໍ ໂມຄະບຸຣຸດ ເຮົາຕຳໜິການຂ້າສັດ ສັນເສີນການງົດເວັ້ນຈາກການຂ້າສັດໂດຍປະການຕ່າງ ໆ ບໍ່ແມ່ນບໍ ໂມຄະບຸຣຸດ ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຊັກຊວນໃຫ້ຂ້າສັດ ອົງໃດຊັກຊວນ ເພິ່ງປັບອາບັດຕາມທຳ ພິກຂຸທັງຫຼາຍ

ພິກຂຸບໍ່ເພິ່ງໃຊ້ໜັງງົວ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ໜັງອັນໃດກໍຕາມ ພິກຂຸບໍ່ເພິ່ງໃຊ້ ອົງໃດໃຊ້ ຕ້ອງອາບັດທຸກກົດ"

## ໑໘໖. ຄິຫິວິກະຕານຸນຍາຕາທິ

## ວ່າດ້ວຍຊົງອະນຸຍາດເຄື່ອງຄິຫິວິກັດເປັນຕົ້ນ

[໘໘໖] ສະໄໝນັ້ນ ຕຽງກໍດີ ຕັ່ງກໍດີກອົງຄົນທັງຫຼາຍ ຫຸ້ມດ້ວຍໜັງແດ່ ຮັດດ້ວຍໜັງແດ່ ພິກຂຸທັງຫຼາຍຢຳເກງຢູ່ຈຶ່ງບໍ່ນັ່ງເຕັງ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນັ່ງເຕັງຕຽງຕັ່ງທີ່ເປັນຄິຫິວິກັດ ແຕ່ບໍ່ອະນຸຍາດໃຫ້ນອນເຕັງ"

ຕໍ່ມາ ວິຫານທັງຫຼາຍເຂົາມັດຮັດດ້ວຍເຊືອກໜັງ ພິກຂຸທັງຫຼາຍຢຳເກງຢູ່ຈຶ່ງບໍ່ນັ່ງອີງ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ນັ່ງອີງສະເພາະເຊືອກ"

## ຊົງຫ້າມແລະອະນຸຍາດໃຫ້ໃສ່ເກີບເຂົ້າໝູ່ບ້ານ

## ເລື້ອງພຣະສັບພັກຄີໃສ່ເກີບເຂົ້າໝູ່ບ້ານແລະພິກຂຸເປັນໄຂ້

ສະໄໝນັ້ນ ພວກພິກຂຸສັບພັກຄີໃສ່ເກີບເຂົ້າໝູ່ບ້ານ

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຄືຄະລຶຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃສ່ເກີບເຂົ້າໝູ່ບ້ານ ອົງໃດໃສ່ ຕ້ອງອາບັດທຸກກົດ"

ຕໍ່ມາ ພິກຂຸອົງໜຶ່ງເປັນໄຂ້ ບໍ່ໃສ່ເກີບບໍ່ອາດເຂົ້າໝູ່ບ້ານໄດ້

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸໄຂ້ໃສ່ເກີບເຂົ້າໝູ່ບ້ານໄດ້"

# ໑໕໗. ໂສນະກຸຕິກັນນະວັດຖຸ

## ວ່າດ້ວຍພຣະໂສນະກຸຕິກັນນະ

## ເລື້ອງພຣະມະຫາກັດຈານະ

[໔໕໗] ສະໄໝນັ້ນ ທ່ານພຣະມະຫາກັດຈານະພັກຢູ່ທີ່ພູປະປາຕະ[໒] ເມືອງກຸຣຸຣະຄະຣະ ໃນແຄວ້ນອະວັນຕີ ຄັ້ງນັ້ນ ອຸປາສົກຊື່ໂສນະກຸຕິກັນນະ ເປັນອຸປັດຖາກຂອງທ່ານພຣະມະຫາກັດຈານະ ຕໍ່ມາ ເຂົາເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄຫວ້ແລ້ວ ນັ່ງທີ່ສົມຄວນ ໄດ້ກ່າວກັບທ່ານພຣະມະຫາກັດຈານະດັ່ງນີ້ວ່າ "ທ່ານຜູ້ຈະເລີນ ທຳຕາມທີ່ພຣະຜູ້ເປັນເຈົ້າມະຫາກັດຈານະສະແດງນັ້ນ ຂ້ານ້ອຍເຂົ້າໃຈວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຢ່າງຍິ່ງຄືຫອຍສັງທີ່ຂັດດີແລ້ວ ບໍ່ແມ່ນກະທຳໄດ້ງ່າຍ ຂ້ານ້ອຍປາຖະໜາຈະແຖຜົມ ແຖໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນມາບວດເປັນບັນພະຊິດ ຂໍພຣະຜູ້ເປັນເຈົ້າກັດຈານະໂຜດໃຫ້ຂ້ານ້ອຍບວດດ້ວຍເທີ້ນ ຂ້ານ້ອຍ"

ເມື່ອເຂົາກ່າວແນວນີ້ ທ່ານພຣະມະຫາກັດຈານະໄດ້ກ່າວກັບອຸປາສົກໂສນະກຸຕິກັນນະ ດັ່ງນີ້ວ່າ "ການປະພຶດພົມມະຈັນເຊິ່ງຕ້ອງນອນຜູ້ດຽວ[໓] ບໍຣິໂພກອາຫານຄາບດຽວຈົນຕະຫຼອດຊີບເຮັດໄດ້ຍາກ ແຕ່ຖ້າຈັ່ງຊັ້ນແລ້ວ ໂສນະ ທ່ານເປັນຄະລືຫັດຢູ່ບ້ານນັ້ນແລ ຈົ່ງໝັ່ນປະພຶດຕາມຄຳສັ່ງສອນຂອງພຣະພຸດທະເຈົ້າທັງຫຼາຍ ເຊິ່ງເປັນພົມມະຈັນທີ່ຕ້ອງນອນຜູ້ດຽວ ບໍຣິໂພກອາຫານຄາບດຽວຕາມເວລາທີ່ ເໝາະສົມເທີ້ນ"[໔]

ຄັ້ງນັ້ນ ຄວາມຄິດທີ່ນ້ອມໄປເພື່ອບັນພະຊາຂອງອຸປາສົກໂສນະກຸຕິກັນນະ ລະງັບໄປ

ແມ່ນເທື່ອທີ ໔ ອຸປາສົກໂສນະກຸຕິກັນນະ ໗ລ໗

ແມ່ນເທື່ອທີ ໓ ອຸປາສົກໂສນະກຸຕິກັນນະ ເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄຫວ້ແລ້ວນັ່ງທີ່ສົມຄວນ ໄດ້ກ່າວກັບທ່ານພຣະມະຫາກັດຈານະດັ່ງນີ້ວ່າ "ທ່ານຜູ້ຈະເລີນ ທຳຕາມທີ່ພຣະຜູ້ເປັນເຈົ້າມະຫາກັດຈານະສະແດງນັ້ນ ຂ້ານ້ອຍເຂົ້າໃຈວ່າ ການທີ່ຜູ້ຢູ່ຄອງເຮືອນຈະປະພຶດພົມມະຈັນໃຫ້ບໍລິສຸດບໍລິບູນຢ່າງຍິ່ງຄືຫອຍສັງທີ່ຂັດດີແລ້ວ ບໍ່ແມ່ນກະທຳໄດ້ງ່າຍ ຂ້ານ້ອຍປາຖະໜາຈະແຖຜົມ ແຖໜວດ ນຸ່ງຫົ່ມຜ້າກາສາຍະ ອອກຈາກເຮືອນມາບວດເປັນບັນພະຊິດ ຂໍພຣະຜູ້ເປັນເຈົ້າກັດຈານະໂຜດໃຫ້ຂ້ານ້ອຍບວດດ້ວຍເທີ້ນ ຂ້ານ້ອຍ"

ລຳດັບນັ້ນ ທ່ານພຣະມະຫາກັດຈານະຈຶ່ງໃຫ້ອຸປາສົກໂສນະກຸຕິກັນນະບວດ

ກໍສະໄໝນັ້ນ ອະວັນຕີທັກຂິນາບົດ ມີພິກຂຸໜ້ອຍ ທ່ານພຣະມະຫາກັດຈານະຈັດຫາພິກຂຸສົງຈາກບ່ອນນັ້ນ ໆ ໃຫ້ຄົບອົງປະຊຸມ ຄື ໑໐ ອົງ ໄດ້ຍາກລຳບາກ ເວລາລ່ວງໄປເຖິງ ໓ ປີ ຈຶ່ງໃຫ້ທ່ານໂສນະອຸປະສົມບົດໄດ້

## ໑໕໗. ມະຫາກັດຈານະປັນຈະວະຣະປະຣິທັດສະນາ

## ວ່າດ້ວຍອາບັດຕິກະພົດຂອງທ່ານພຣະມະຫາກັດຈານະ ໕ ປະການ

ສະໄໝນັ້ນ ທ່ານພຣະໂສນະອອກພັນສາແລ້ວ ຫຼີບຫຼີກຢູ່ໃນບ່ອນສະງັດ ໄດ້ເກີດຄວາມຄິດຂຶ້ນໃນໃຈແນວນີ້ວ່າ "ເຮົາພຽງແຕ່ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນຊົງມີພຣະລັກສະນະແນວນີ້ແລະແນວນີ້ ແຕ່ເຮົາບໍ່ເຄີຍເຝົ້າສະເພາະພຣະພັກເລີຍ ເຮົາຈະໄປເຂົ້າເຝົ້າພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຖ້າພຣະອຸປັດຊາອະນຸຍາດ"

ເມື່ອເວລາຄ່ຳ ທ່ານພຣະໂສນະອອກຈາກບ່ອນຫຼີບຫຼີກ ເຂົ້າໄປຫາທ່ານພຣະມະຫາກັດຈານະຮອດບ່ອນຢູ່ ໄຫວ້ແລ້ວນັ່ງ ທີ່ສົມຄວນ ທ່ານພຣະໂສນະໄດ້ກ່າວກັບທ່ານພຣະມະຫາກັດຈານະດັ່ງນີ້ວ່າ "ທ່ານຜູ້ຈະເລີນ ຂໍໂອກາດ ຂ້ານ້ອຍຫຼີບຫຼີກຢູ່ໃນບ່ອນສະງັດ ໄດ້ເກີດຄວາມຄິດຂຶ້ນໃນໃຈແນວນີ້ວ່າ "ເຮົາພຽງແຕ່ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຊົງມີພຣະລັກສະນະແນວນີ້ແລະແນວນີ້ ແຕ່ເຮົາບໍ່ເຄີຍເຝົ້າສະເພາະພຣະພັກເລີຍ ເຮົາຈະໄປເຂົ້າເຝົ້າພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຖ້າພຣະອຸປັດຊາອະນຸຍາດ" ທ່ານຜູ້ຈະເລີນ ຂ້ານ້ອຍຈະໄປເຂົ້າເຝົ້າພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ ຖ້າພຣະອຸປັດຊາອະນຸຍາດ"

ທ່ານພຣະມະຫາກັດຈານະກ່າວວ່າ "ດີແລ້ວ ດີແລ້ວ ໂສນະ ທ່ານຈົ່ງໄປເຝົ້າພຣະຜູ້ມີພຣະພາກເອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນເທີ້ນ ທ່ານຈະເຫັນພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຜູ້ໜ້າເຫຼື້ອມໃສ ຊົງເປັນບ່ອນຕັ້ງແຫ່ງຄວາມເຫຼື້ອມໃສ໗ ມີພຣະອິນຊີສະງົບ ມີພຣະຫະໄທສະງົບ ຊົງ ບັນລຸທະມະຖະແລະສະມະຖະສູງສຸດ໘ ຊົງເຝິກຝົນແລ້ວ ຄຸ້ມຄອງແລ້ວ ຊົງສັງລວມອິນຊີ ຊົງເປັນຜູ້ປະເສີດ ທ່ານໂສນະ ທ່ານຈົ່ງຖວາຍອະພິວາດດ້ວຍຂະໜ່ອມແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າຕາມຄຳຂອງເຮົາວ່າ ຂ້າແຕ່ ພຣະອົງຜູ້ຈະເລີນ ທ່ານພຣະມະຫາກັດຈານະຜູ້ເປັນພຣະອຸປັດຊາຂອງຂ້າພຣະອົງ ຂໍຖວາຍອະພິວາດແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ດັ່ງນີ້ ແລະຈົ່ງຂາບທູນແນວນີ້ວ່າ

໑. ຂ້າແຕ່ ພຣະອົງຜູ້ຈະເລີນ ອະວັນຕີທັກຂິນາບົດ ມີພິກຂຸໜ້ອຍ ຂ້າພຣະອົງຈັດຫາພິກຂຸສົງຈາກບ່ອນນັ້ນ ໆ ໃຫ້ຄົບອົງປະຊຸມ ຄື ໑໐ ອົງ ໄດ້ຍາກລຳບາກ

ເວລາລ່ວງໄປເຖິງ ໖ ປີ໑ ຈຶ່ງໄດ້ອຸປະສົມບົດ ຖ້າຈັ່ງໃດ ພຣະຜູ້ມີພຣະພາກເຈົ້າ ເພິ່ງຊົງອະນຸຍາດໃຫ້ອຸປະສົມບົດດ້ວຍຄະນະສົງໜ້ອຍອົງກວ່ານີ້ໄດ້ສະເພາະໃນ ອະວັນຕີທັກຂິນາບົດ

໒. ຂ້າແຕ່ ພຣະອົງຜູ້ຈະເລີນ ພື້ນດິນໃນອະວັນຕີທັກຂິນາບົດ ມີສີດຳຫຼາຍ ແຂງ ມີ ຮອຍຣະແທງກີບງົວ ຖ້າຈັ່ງໃດ ພຣະຜູ້ມີພຣະພາກເຈົ້າເພິ່ງຊົງອະນຸຍາດເກີບ ຫຼາຍຊັ້ນ ສະເພາະໃນອະວັນຕີທັກຂິນາບົດ

໓. ຂ້າແຕ່ ພຣະອົງຜູ້ຈະເລີນ ພວກມະນຸດໃນອະວັນຕີທັກຂິນາບົດນິຍົມການ ອາບນ້ຳ ຖືວ່ານ້ຳຈະເຮັດໃຫ້ສະອາດ ຖ້າຈັ່ງໃດ ພຣະຜູ້ມີພຣະພາກເຈົ້າເພິ່ງຊົງ ອະນຸຍາດ ການອາບນ້ຳໄດ້ເປັນປະຈຳ ສະເພາະໃນອະວັນຕີທັກຂິນາບົດ

໔. ຂ້າແຕ່ ພຣະອົງຜູ້ຈະເລີນ ໃນອະວັນຕີທັກຂິນາບົດ ມີໜັງທີ່ເປັນເຄື່ອງປູລາດ ຄື ໜັງແກະ ໜັງແບ້ ໜັງກວາງ ຄືກັບທີ່ມັດຊິມະຊົນນະບົດມີຫຍ້າຕີນກາ ຫຍ້າ ຫາງນົກຍູງ ຫຍ້າໜວດແມວ ຫຍ້າຫາງຊ້າງ ຖ້າຈັ່ງໃດ ພຣະຜູ້ມີພຣະພາກເຈົ້າ ເພິ່ງຊົງອະນຸຍາດໜັງທີ່ເປັນເຄື່ອງປູລາດ ຄື ໜັງແກະ ໜັງແບ້ ແລະໜັງກວາງ ສະເພາະໃນອະວັນຕີທັກຂິນາບົດ

໕. ຂ້າແຕ່ ພຣະອົງຜູ້ຈະເລີນ ເວລານີ້ ພວກມະນຸດຖວາຍຈີວອນຝາກພິກຂຸທັງຫຼາຍ ຜູ້ຢູ່ນອກສີມາດ້ວຍກ່າວວ່າ ພວກເຮົາຂໍຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້ ພິກຂຸຜູ້ ຮັບຝາກເຫຼົ່ານັ້ນມາບອກວ່າ ພວກມະນຸດຊື່ນີ້ຖວາຍຈີວອນແກ່ທ່ານ ພິກຂຸທີ່ຈະ ໄດ້ຮັບຈີວອນເຫຼົ່ານັ້ນຍຳເກງຢູ່ ຈຶ່ງບໍ່ຍິນດີ ດ້ວຍຄິດວ່າ ຂອງທີ່ເປັນນິດສັກຄີ໑ ຢ່າໄດ້ມີແກ່ພວກເຮົາເລີຍ ຖ້າຈັ່ງໃດ ພຣະຜູ້ມີພຣະພາກເຈົ້າເພິ່ງຕັດບອກເຫດ ໃນເລື້ອງຈີວອນ"

## ພຣະໂສນະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ

ທ່ານພຣະໂສນະຮັບຄຳຂອງທ່ານພຣະມະຫາກັດຈານະແລ້ວ ລຸກຈາກອາສະນະໄຫວ້ ທ່ານພຣະມະຫາກັດຈານະ ກະທຳປະທັກຂິນ ເກັບເສນາສະນະ ຖືບາດແລະຈີວອນ ຈາຣິກໄປ ທາງນະຄອນສາວັດຖີ ເດີນທາງໄປໂດຍລຳດັບຈົນເຖິງນະຄອນສາວັດຖີ ເຖິງພຣະເຊຕະວັນອາ ຮາມຂອງອະນາຖະບິນດິກະເສດຖີແລ້ວເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າຈົນຮອດບ່ອນຢູ່ ຖວາຍ ອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງ ທີ່ສົມຄວນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບທ່ານພຣະອານົນວ່າ "ອານົນ ທ່ານຈົ່ງຈັດເສນາ ສະນະຕ້ອນຮັບພິກຂຸອາຄັນຕຸກະອົງນີ້"

ທ່ານພຣະອານົນຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງພຣະປະສົງຈະປະທັບຢູ່ໃນວິຫານຫຼັງ ດຽວກັບພິກຂຸອົງທີ່ພຣະອົງມີພຣະບັນຊາໃຊ້ເຮົາວ່າ ອານົນ ທ່ານຈົ່ງຈັດເສນາສະນະຕ້ອນຮັບພິກ

ຊຸອາຄັນຕຸກະອົງນີ້ ພຣະຜູ້ມີພຣະພາກເຈົ້າຊົງພຣະປະສົງຈະປະທັບຢູ່ໃນວິຫານແຫ່ງດຽວກັບທ່ານພຣະໂສນະ" ຈຶ່ງຈັດເສນາສະນະຕ້ອນຮັບທ່ານພຣະໂສນະໃນພຣະວິຫານອັນເປັນທີ່ປະທັບຂອງພຣະຜູ້ມີພຣະພາກເຈົ້າ

## ເລື້ອງພຣະໂສນະສູດພຣະສູດໃນອັດຖະກະວັກ

[໔໕໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃນກາງແຈ້ງຈົນເດິກຈຶ່ງສະເດັດເຂົ້າພຣະວິຫານ ຝ່າຍທ່ານພຣະໂສນະກໍໃຊ້ເວລາຢູ່ໃນກາງແຈ້ງຈົນເດິກຈຶ່ງເຂົ້າພຣະວິຫານ ພໍເຖິງເວລາໃກ້ຮຸ່ງ ພຣະຜູ້ມີພຣະພາກເຈົ້າຊົງລຸກຂຶ້ນແລ້ວ ຊົງເຊື້ອເຊີນທ່ານພຣະໂສນະວ່າ "ພິກຂຸ ທ່ານຈົ່ງກ່າວ ທຳຕາມຖະໜັດເທີ້ນ"[๑]

ທ່ານພຣະໂສນະທູນສະໜອງພຣະດຳຣັດແລ້ວ ໄດ້ສູດພຣະສູດທັງໝົດ ໃນອັດຖະກະວັກ[໒]ໂດຍທຳນອງສະຣະພັນຍະ

ເມື່ອທ່ານພຣະໂສນະສູດທຳນອງສະຣະພັນຍະຈົບແລ້ວ ພຣະຜູ້ມີພຣະພາກເຈົ້າຊົງຊົມຊື່ນຢ່າງຍິ່ງຈຶ່ງໄດ້ປະທານສາທຸການວ່າ "ດີແລ້ວ ດີແລ້ວ ພິກຂຸ ທ່ານຮ່ຳຮຽນສູດໃນອັດຖະກະວັກມາດີແລ້ວ ຈື່ໄດ້ແມ່ນຍຳດີ ອອກສຽງສູດໄດ້ມ່ວນຫູ ບໍ່ມີທີ່ໜ້າຕຳໜິ ບອກຄວາມໝາຍໄດ້ຊັດເຈນ ພິກຂຸ ທ່ານມີພັນສາທໍ່ໃດ"

ທ່ານພຣະໂສນະຂາບທູນວ່າ "ຂ້າພຣະອົງບວດໄດ້ ๑ ພັນສາ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸ ຍ້ອນເຫດໃດ ທ່ານຈຶ່ງຊ້າຢູ່ນໍ"

ທ່ານພຣະໂສນະຂາບທູນວ່າ "ຂ້າພຣະອົງເຫັນໂທດໃນການຄົນແລ້ວ ແຕ່ຜູ້ຄອງເຮືອນວຸ່ນວາຍມີກິດຫຼາຍ ມີທຸລະຫຼາຍ ຂ້ານ້ອຍ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້ເລື້ອງນີ້ແລ້ວ ຈຶ່ງຊົງເປ່ງພຣະອຸທານວ່າ

ອາຣະຍະຊົນເຫັນໂທດໃນໂລກ ຮູ້ທຳທີ່ບໍ່ມີອຸປະທິ
ຈຶ່ງບໍ່ຍິນດີໃນບາບ ຍ້ອນຄົນບໍລິສຸດ ຍ່ອມບໍ່ຍິນດີໃນບາບ"

ລຳດັບນັ້ນ ທ່ານພຣະໂສນະຄິດວ່າ "ພຣະຜູ້ມີພຣະພາກເຈົ້າກຳລັງຊົງຊົມຊື່ນເຮົາ ເວລານີ້ຄວນຂາບທູນຄຳສັ່ງຂອງພຣະອຸປັດຊາ" ຈຶ່ງລຸກຈາກອາສະນະ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ໝອບລົງແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າ ດ້ວຍຂະໜ່ອມ ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ທ່ານພຣະມະຫາກັດຈານະ ຜູ້ເປັນພຣະອຸປັດຊາຂອງຂ້າພຣະອົງ ຂໍຂາບຖວາຍອະພິວາດແທບພຣະບາດຂອງພຣະພຣະຜູ້ມີພຣະພາກເຈົ້າດ້ວຍຂະໜ່ອມ ສັ່ງໃຫ້ຂາບທູນວ່າ

໑. ຂ້າແຕ່ ພຣະອົງຜູ້ຈະເລີນ ອະວັນຕີທັກຂິນາບົດ ມີພິກຂຸໜ້ອຍ ຂ້າພຣະອົງຈັດຫາພິກຂຸສົງຈາກບ່ອນນັ້ນ ໆ ໃຫ້ຄົບອົງປະຊຸມ ຄື ໑໐ ອົງ ໄດ້ຍາກລຳບາກ ເວລາລ່ວງໄປເຖິງ ໓ ປີ ຈຶ່ງໄດ້ອຸປະສົມບົດ ຖ້າຈັ່ງໃດ ພຣະຜູ້ມີພຣະພາກເຈົ້າເພິ່ງຊົງອະນຸຍາດໃຫ້ອຸປະສົມບົດດ້ວຍຄະນະສົງໜ້ອຍອົງກວ່ານີ້ໄດ້ສະເພາະໃນອະວັນຕີທັກຂິນາບົດ

໒. ຂ້າແຕ່ ພຣະອົງຜູ້ຈະເລີນ ພື້ນດິນໃນອະວັນຕີທັກຂິນາບົດ ມີສີດຳຫຼາຍ ແຂງ ມີຮອຍຣະແທງກີບງົວ ຖ້າຈັ່ງໃດ ພຣະຜູ້ມີພຣະພາກເຈົ້າເພິ່ງຊົງອະນຸຍາດເກີບຫຼາຍຊັ້ນສະເພາະໃນອະວັນຕີທັກຂິນາບົດ

໓. ຂ້າແຕ່ ພຣະອົງຜູ້ຈະເລີນ ພວກມະນຸດໃນອະວັນຕີທັກຂິນາບົດນິຍົມການອາບນໍ້າ ຖືວ່ານໍ້າຈະເຮັດໃຫ້ສະອາດ ຖ້າຈັ່ງໃດ ພຣະຜູ້ມີພຣະພາກເຈົ້າເພິ່ງຊົງອະນຸຍາດ ການອາບນໍ້າໄດ້ເປັນປະຈຳ ສະເພາະໃນອະວັນຕີທັກຂິນາບົດ

໔. ຂ້າແຕ່ ພຣະອົງຜູ້ຈະເລີນ ໃນອະວັນຕີທັກຂິນາບົດ ມີໜັງທີ່ເປັນເຄື່ອງປູລາດ ຄືໜັງແກະ ໜັງແບ້ ໜັງກວາງ ຄືກັບທີ່ມັດຊິມະຊົນນະບົດມີຫຍ້າຕີນກາ ຫຍ້າຫາງນົກຍູງ ຫຍ້າໜວດແມວ ຫຍ້າຫາງຊ້າງ ຖ້າຈັ່ງໃດ ພຣະຜູ້ມີພຣະພາກເຈົ້າເພິ່ງຊົງອະນຸຍາດ ໜັງທີ່ເປັນເຄື່ອງປູລາດ ຄື ໜັງແກະ ໜັງແບ້ ແລະໜັງກວາງສະເພາະໃນອະວັນຕີທັກຂິນາບົດ

໕. ຂ້າແຕ່ ພຣະອົງຜູ້ຈະເລີນ ເວລານີ້ ມະນຸດທັງຫຼາຍຖວາຍຈີວອນຝາກພິກຂຸທັງຫຼາຍ ຜູ້ຢູ່ນອກສີມາດ້ວຍກ່າວວ່າ ພວກເຮົາຂໍຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້ ພິກຂຸຜູ້ຮັບຝາກເຫຼົ່ານັ້ນມາບອກວ່າ ພວກມະນຸດຊື່ນີ້ຖວາຍຈີວອນແກ່ທ່ານ ພິກຂຸທີ່ຈະໄດ້ຮັບຈີວອນເຫຼົ່ານັ້ນຢຳເກງຢູ່ ຈຶ່ງບໍ່ຍິນດີດ້ວຍຄິດວ່າ ຂອງທີ່ເປັນນິດສັກຄີຢ່າໄດ້ມີແກ່ພວກເຮົາເລີຍ ຖ້າຈັ່ງໃດ ພຣະຜູ້ມີພຣະພາກເຈົ້າ ເພິ່ງຕັດບອກເຫດໃນເລື້ອງຈີວອນ"

## ເລື້ອງປະທານພອນ ໕ ຢ່າງແກ່ພຣະໂສນະ

[໔໕໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ

໑. ພິກຂຸທັງຫຼາຍ ອະວັນຕີທັກຂິນາບົດ ມີພິກຂຸໜ້ອຍ ພິກຂຸທັງຫຼາຍ ເຮົາອະນຸຍາດການອຸປະສົມບົດດ້ວຍຄະນະມີຈຳນວນ ໕ ອົງລວມທັງພຣະວິໄນທອນ ໃນປັດຈັນຕະຊົນນະບົດທັງໝົດ

## ກຳນົດເຂດປັດຈັນຕະຊົນນະບົດແລະມັດຊິມະຊົນນະບົດ

ບັນດາຊົນນະບົດເຫຼົ່ານັ້ນ ປັດຈັນຕະຊົນນະບົດກຳນົດເຂດໄວ້ ດັ່ງນີ້

ທາງທິດຕາເວັນອອກມີນິຄົມກະຊັງຄະລະ ເປັນຂອບເຂດ ຖັດເຂົ້າມາເຖິງມະຫາສາລະນະຄອນ ພົ້ນເຂດນັ້ນໄປເປັນປັດຈັນຕະຊົນນະບົດ ດ້ານໃນເປັນມັດຊິມະຊົນນະບົດ

ທາງທິດເໜືອມີແມ່ນ້ຳສັນລະວະຕີ ເປັນຂອບເຂດ ພົ້ນເຂດນັ້ນອອກໄປເປັນປັດຈັນຕະຊົນນະບົດ ດ້ານໃນເປັນມັດຊິມະຊົນນະບົດ

ທາງທິດໃຕ້ມີນິຄົມເສຕະກັນນິກະ ເປັນຂອບເຂດ ພົ້ນເຂດນັ້ນອອກໄປເປັນປັດຈັນຕະຊົນນະບົດ ດ້ານໃນເປັນມັດຊິມະຊົນນະບົດ

ທາງທິດຕາເວັນຕົກມີໝູ່ບ້ານພາມຖູນະ ເປັນຂອບເຂດ ພົ້ນເຂດນັ້ນອອກໄປເປັນປັດຈັນຕະຊົນນະບົດ ດ້ານໃນເປັນມັດຊິມະຊົນນະບົດ

ທາງທິດອຸດອນມີພູອຸສີຣະທະຊະເປັນຂອບເຂດ ພົ້ນເຂດນັ້ນອອກໄປເປັນປັດຈັນຕະຊົນນະບົດ ດ້ານໃນເປັນມັດຊິມະຊົນນະບົດ

ພິກຂຸທັງຫຼາຍ ເຮົາອະນຸຍາດການອຸປະສົມບົດດ້ວຍຄະນະສົງ ໕ ອົງລວມທັງພຣະວິໄນທອນໄດ້ທົ່ວປັດຈັນຕະຊົນນະບົດດັ່ງກ່າວນີ້

໒. ພິກຂຸທັງຫຼາຍ ພື້ນດິນໃນອະວັນຕີທັກຂິນາບົດ ມີສີດຳຫຼາຍ ແຂງ ມີຮອຍຣະແຫງກີບງົວ ເຮົາອະນຸຍາດເກີບຫຼາຍຊັ້ນ ໃນປັດຈັນຕະຊົນນະບົດທັງໝົດ

໓. ພິກຂຸທັງຫຼາຍ ພວກມະນຸດໃນອະວັນຕີທັກຂິນາບົດນິຍົມການອາບນ້ຳ ຖືວ່ານ້ຳຈະເຮັດໃຫ້ສະອາດ ເຮົາອະນຸຍາດການອາບນ້ຳໄດ້ເປັນປະຈຳ ໃນປັດຈັນຕະຊົນນະບົດທັງໝົດ

໔. ພິກຂຸທັງຫຼາຍ ໃນອະວັນຕີທັກຂິນາບົດມີໜັງທີ່ເປັນເຄື່ອງປູລາດ ຄື ໜັງແກະໜັງແບ້ ໜັງກວາງ ຄືກັບທີ່ມັດຊິມະຊົນນະບົດມີຫຍ້າຕີນກາ ຫຍ້າຫາງນົກຍູງຫຍ້າໜວດແມວ ຫຍ້າຫາງຊ້າງ ເຮົາອະນຸຍາດໜັງທີ່ເປັນເຄື່ອງປູລາດ ຄື ໜັງແກະ ໜັງແບ້ ແລະໜັງກວາງ ໃນປັດຈັນຕະຊົນນະບົດທັງໝົດ

໕. ພິກຂຸທັງຫຼາຍ ຖ້າພວກມະນຸດຖວາຍຈີວອນຝາກພິກຂຸທັງຫຼາຍຜູ້ຢູ່ນອກສີມາດ້ວຍກ່າວວ່າພວກ ເຮົາຂໍຝາກຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້ ເຮົາອະນຸຍາດໃຫ້ຍິນດີຈີວອນນັ້ນຍັງບໍ່ນັບ (ຣາຕີ) ຕະຫຼອດເວລາທີ່ຍັງບໍ່ເຖິງມື"

**ຈຳມະຂັນທະກະທີ ໕ ຈົບ**

# ໑໕໙. ລວມເລື້ອງທີ່ມີໃນຈຳມະຂັນທະກະ

## ຈຳມະຂັນທະກະມີ ໓໓ ເລື້ອງ ຄື

ເລື້ອງພຣະເຈົ້າພິມພິສານຈອມທັບມະຄົດຣັດປົກຄອງໝູ່ບ້ານ ໗໐,໐໐໐ ໝູ່ບ້ານຮັບສັ່ງໃຫ້ນາຍໂສນະໂກລິວິສະເຂົ້າເຝົ້າ
ເລື້ອງພຣະສາຄະຕະສະແດງອຸດຕະຣິມະນຸດສະທຳອິດທິປາຕິຫານ
ເລື້ອງໂສນະໂກລິວິສະເສດຖີບຸດອອກບັນພະຊາຜາຣົບຄວາມພຽນຈົນຕີນແຕກ
ເລື້ອງຊົງປຽບທຽບຄວາມພຽນກັບສາຍພິນ
ເລື້ອງຊົງອະນຸຍາດໃຫ້ໃຊ້ເກີບຊັ້ນດຽວ ເລື້ອງຊົງຫ້າມໃຊ້ເກີບສີຂຽວ
ເລື້ອງຊົງຫ້າມໃຊ້ເກີບສີເຫຼືອງ
ເລື້ອງຊົງຫ້າມໃຊ້ເກີບສີແດງ ເລື້ອງຊົງຫ້າມໃຊ້ເກີບສີບານເຢັນ
ເລື້ອງຊົງຫ້າມໃຊ້ເກີບສີດຳ

ເລື້ອງຊົງຫ້າມໃຊ້ເກີບສີແສດ ເລື້ອງຊົງຫ້າມໃຊ້ເກີບສີຊົມພູ
ເລື້ອງຊົງຫ້າມໃຊ້ເກີບມີຫູ ເລື້ອງຊົງຫ້າມໃຊ້ເກີບຕິດແຜ່ນໜັງຫຸ້ມສົ້ນ
ເລື້ອງຊົງຫ້າມໃຊ້ເກີບຫຸ້ມແຂ່ງ ເລື້ອງຊົງຫ້າມໃຊ້ເກີບປົກຫຼັງຕີນ
ເລື້ອງຊົງຫ້າມໃຊ້ເກີບຍັດນຸ່ນ
ເລື້ອງຊົງຫ້າມໃຊ້ເກີບມີຫູລາຍຄ້າຍຂົນປີກນົກກະທາ
ເລື້ອງຊົງຫ້າມໃຊ້ເກີບຫູງອນມີຮູບຊົງຄ້າຍເຂົາແກະ
ເລື້ອງຊົງຫ້າມໃຊ້ເກີບຫູງອນມີຮູບຊົງຄ້າຍເຂົາແບ້

ເລື້ອງຊົງຫ້າມໃຊ້ເກີບຫູງອນມີຮູບຊົງຄ້າຍຫາງແມງງອດ
ເລື້ອງຊົງຫ້າມໃຊ້ເກີບທີ່ຫຍິບດ້ວຍຂົນນົກຍູງ
ເລື້ອງຊົງຫ້າມໃຊ້ເກີບທີ່ງົດງາມວິຈິດ
ເລື້ອງຊົງຫ້າມໃຊ້ເກີບທີ່ຂິບດ້ວຍໜັງຣາດຊະສີ
ເລື້ອງຊົງຫ້າມໃຊ້ເກີບທີ່ຂິບດ້ວຍໜັງເສືອໂຄ່ງ
ເລື້ອງຊົງຫ້າມໃຊ້ເກີບທີ່ຂິບດ້ວຍໜັງເສືອເຫຼືອງ
ເລື້ອງຊົງຫ້າມໃຊ້ເກີບທີ່ຂິບດ້ວຍໜັງເສືອດາວ
ເລື້ອງຊົງຫ້າມໃຊ້ເກີບທີ່ຂິບດ້ວຍໜັງນາກ
ເລື້ອງຊົງຫ້າມໃຊ້ເກີບທີ່ຂິບດ້ວຍໜັງແມວ
ເລື້ອງຊົງຫ້າມໃຊ້ເກີບທີ່ຂິບດ້ວຍໜັງຄ່າງ
ເລື້ອງຊົງຫ້າມໃຊ້ເກີບທີ່ຂິບດ້ວຍໜັງນົກເຄົ້າ

ເລື້ອງພິກຂຸຕີນແຕກ ເລື້ອງພຣະສັບພັກຄີໃສ່ເກີບໃນອາຮາມ
ເລື້ອງພິກຂຸອາພາດເປັນໜໍ່ທີ່ຕີນ ເລື້ອງພິກຂຸບໍ່ລ້າງຕີນ
ເລື້ອງພິກຂຸຢຽບຕໍໄມ້ ເລື້ອງພຣະສັບພັກຄີໃສ່ຊຽງຕີນຢ່າງສຽງດັງກຶກກັກ
ເລື້ອງໃສ່ຊຽງຕີນເຮັດດ້ວຍໃບຕານ ເລື້ອງໃສ່ຊຽງຕີນເຮັດດ້ວຍໃບໄຜ່
ເລື້ອງໃສ່ຊຽງຕີນເຮັດດ້ວຍຫຍ້າສາມັນ
ເລື້ອງໃສ່ຊຽງຕີນເຮັດດ້ວຍຫຍ້າມຸ້ງກະຕ່າຍ
ເລື້ອງໃສ່ຊຽງຕີນເຮັດດ້ວຍຫຍ້າປ້ອງ ເລື້ອງໃສ່ຊຽງຕີນສານດ້ວຍໃບເປົ້ງ
ເລື້ອງໃສ່ຊຽງຕີນເຮັດດ້ວຍແຝກ ເລື້ອງໃສ່ຊຽງຕີນເຮັດດ້ວຍຂົນສັດ
ເລື້ອງໃສ່ຊຽງຕີນປະດັບດ້ວຍຄໍາ ເລື້ອງໃສ່ຊຽງຕີນເຮັດດ້ວຍເງິນ

ເລື້ອງໃສ່ຊຽງຕີນປະດັບດ້ວຍແກ້ວມະນີ
ເລື້ອງໃສ່ຊຽງຕີນປະດັບດ້ວຍແກ້ວໄພທູນ
ເລື້ອງໃສ່ຊຽງຕີນປະດັບດ້ວຍແກ້ວຜຼຶກ
ເລື້ອງໃສ່ຊຽງຕີນປະດັບດ້ວຍສໍາຣິດ
ເລື້ອງໃສ່ຊຽງຕີນປະດັບດ້ວຍແກ້ວ ເລື້ອງໃສ່ຊຽງຕີນເຮັດດ້ວຍດີບຸກ
ເລື້ອງໃສ່ຊຽງຕີນເຮັດດ້ວຍສັງກະສີ ເລື້ອງໃສ່ຊຽງຕີນເຮັດດ້ວຍທອງແດງ

ເລື້ອງຈັບງົວ ເລື້ອງພຣະສັບພັກຄີໂດຍສານຍານພາຫະນະ
ເລື້ອງພິກຂຸເປັນໄຂ້ ເລື້ອງຍານທຽມດ້ວຍງົວເຖິກ
ເລື້ອງວໍ ເລື້ອງພຣະສັບພັກຄີໃຊ້ບ່ອນນອນສູງໃຫຍ່
ເລື້ອງໜັງຜືນໃຫຍ່ ເລື້ອງພິກຂຸໃຈບາບຂໍໜັງງົວນ້ອຍ
ເລື້ອງຕຽງຕັ່ງຂອງພວກຄະລຶຫັດຫຸ້ມດ້ວຍໜັງ
ເລື້ອງພຣະສັບພັກຄີໃສ່ເກີບເຂົ້າໝູ່ບ້ານ
ເລື້ອງພິກຂຸເປັນໄຂ້ໃສ່ເກີບເຂົ້າໝູ່ບ້ານໄດ້ ເລື້ອງພຣະມະຫາກັດຈານະ
ເລື້ອງພຣະໂສນະສູດພຣະສູດໃນອັດຖະກະວັກໂດຍທໍານອງສະຣະພັນຍະ

## ເລື້ອງຂໍງປະທານພອນ ๕ ຢ່າງແກ່ພຣະໂສນະ ຄື

໑. ອະນຸຍາດໃຫ້ສົງປັນຈະວັກໃຫ້ອຸປະສົມບົດໄດ້
໒. ອະນຸຍາດໃຫ້ໃສ່ເກີບຫຼາຍຊັ້ນໄດ້
໓. ອະນຸຍາດໃຫ້ອາບນໍ້າໄດ້ເປັນປະຈໍາ
໔. ອະນຸຍາດໃຫ້ໃຊ້ໜັງເຄື່ອງປູລາດໄດ້ໃນທັກຂິນາບົດ
໕. ທາຍົກຖວາຍຈີວອນ ເມື່ອຍັງບໍ່ເຖິງມືພິກຂຸ ອະນຸຍາດໃຫ້ບໍ່ຕ້ອງນັບຣາຕີ

**ຈໍາມະຂັນທະກະ ຈົບ**

# ၆. ເພສັດຊະຂັນທະກະ

## ໑၆໐. ປັນຈະເພສັດຊະກະຖາ

### ວ່າດ້ວຍຊົງອະນຸຍາດເພສັດ ໕

### ເລື້ອງພິກຂຸອາພາດໃນລະດູສາຣະທະ

[໔၆໐] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະ ບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນ ພິກຂຸທັງຫຼາຍປ່ວຍດ້ວຍອາພາດທີ່ເກີດໃນລະດູສາຣະທະ ແມ່ນເຂົ້າຕົ້ມທີ່ດື່ມເຂົ້າໄປກໍກັບອາຈຽນອອກມາ ແມ່ນເຂົ້າສຸກທີ່ສັນແລ້ວກໍກັບອາຈຽນອອກມາ ພິກຂຸເຫຼົ່ານັ້ນ ຈ່ອຍແຫ້ງ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງຍ້ອນພະຍາດນັ້ນ

ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນພິກຂຸເຫຼົ່ານັ້ນຈ່ອຍແຫ້ງ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ຈຶ່ງຕັດຖາມທ່ານພຣະອານົນວ່າ "ອານົນ ເປັນຫຍັງເວລານີ້ ພິກຂຸທັງຫຼາຍຈຶ່ງຈ່ອຍແຫ້ງ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ"

ທ່ານພຣະອານົນຂາບທູນວ່າ "ເວລານີ້ ພິກຂຸທັງຫຼາຍປ່ວຍດ້ວຍອາພາດທີ່ເກີດໃນລະດູສາຣະທະ ແມ່ນເຂົ້າຕົ້ມທີ່ດື່ມເຂົ້າໄປກໍກັບອາຈຽນອອກມາ ແມ່ນເຂົ້າສຸກທີ່ສັນແລ້ວກໍກັບອາຈຽນອອກມາ ພິກຂຸເຫຼົ່ານັ້ນຈຶ່ງຈ່ອຍແຫ້ງ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ຍ້ອນພະຍາດນັ້ນ ຂ້ານ້ອຍ"

### ຊົງອະນຸຍາດເພສັດ ໕ ໃນກາລ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຫຼີບຫຼີກ ປະທັບໃນບ່ອນສະງັດ ໄດ້ເກີດຄວາມດຳຣິໃນພຣະທະໄທແນວນີ້ວ່າ "ເວລານີ້ ພິກຂຸທັງຫຼາຍປ່ວຍດ້ວຍອາພາດທີ່ເກີດໃນລະດູສາຣະທະ ແມ່ນເຂົ້າຕົ້ມທີ່ດື່ມເຂົ້າໄປກໍກັບອາຈຽນອອກມາ ແມ່ນເຂົ້າສຸກທີ່ສັນແລ້ວກໍກັບອາຈຽນອອກມາ ພິກຂຸເຫຼົ່ານັ້ນຈ່ອຍແຫ້ງ ໝອງຄ້ຳ ຫຼ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ຍ້ອນພະຍາດນັ້ນ ເຮົາຈະອະນຸຍາດອັນໃດເປັນຢາແກ່ພິກຂຸທັງຫຼາຍ ເຊິ່ງເປັນທັງໂຕຢາແລະຊາວໂລກຖືກັນວ່າເປັນຢາ ທັງຈະໃຫ້ປະໂຫຍດທາງໂພຊະນາຫານ ແລະບໍ່ເປັນອາຫານຫຍາບ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າ ໄດ້ຊົງດຳຣິດັ່ງນີ້ວ່າ "ເພສັດ ໕ ນີ້ ໄດ້ແກ່ ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜີ້ງ ນ້ຳອ້ອຍ ເປັນທັງໂຕຢາແລະຊາວໂລກຖືກັນວ່າເປັນຢາ ທັງໃຫ້

ປະໂຫຍດທາງໂພຊະນາຫານ ແລະບໍ່ເປັນອາຫານຫຍາບ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງອະນຸຍາດເພສັດ ໕ ນີ້ແກ່ພິກຂຸທັງຫຼາຍ ໃຫ້ຮັບປະເຄນໃນການແລ້ວສັນໃນການ"

ເມື່ອເວລາຄ່ຳ ພຣະຜູ້ມີພຣະພາກເຈົ້າສະເດັດອອກຈາກບ່ອນຫຼີບຫຼີກ ຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາຫຼີບຫຼີກຢູ່ໃນບ່ອນສະງັດ ເກີດຄວາມຄິດຂຶ້ນໃນໃຈແນວນີ້ວ່າ ເວລານີ້ ພິກຂຸທັງຫຼາຍປ່ວຍດ້ວຍອາພາດທີ່ເກີດໃນລະດູສາຣະທະ ແມ່ນເຂົ້າຕົ້ມທີ່ດື່ມເຂົ້າໄປກໍກັບອາຈຽນອອກມາ ແມ່ນເຂົ້າສຸກທີ່ສັນແລ້ວກໍກັບອາຈຽນອອກມາ ພິກຂຸເຫຼົ່ານັ້ນຈ່ອຍແຫ້ງ ໝອງຄ້ຳ ຫູ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ ຍ້ອນພະຍາດນັ້ນ ເຮົາຈະອະນຸຍາດອັນໃດເປັນຢາແກ່ພິກຂຸທັງຫຼາຍ ເຊິ່ງເປັນທັງໂຕຢາ ແລະຊາວໂລກຖືກັນວ່າເປັນຢາ ທັງຈະໃຫ້ປະໂຫຍດທາງໂພຊະນາຫານ ແລະບໍ່ເປັນອາຫານຫຍາບ ພິກຂຸທັງຫຼາຍ ເຮົານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ ເພສັດ ໕ ນີ້ ໄດ້ແກ່ ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜີ້ງ ນ້ຳອ້ອຍ ເປັນທັງໂຕຢາແລະຊາວໂລກຖືກັນວ່າເປັນຢາ ທັງໃຫ້ປະໂຫຍດທາງໂພຊະນາຫານ ແລະບໍ່ເປັນອາຫານຫຍາບ ເຮົາເພິ່ງອະນຸຍາດເພສັດ ໕ ນີ້ແກ່ພິກຂຸທັງຫຼາຍ ໃຫ້ຮັບປະເຄນໃນການແລ້ວສັນໃນການ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸທັງຫຼາຍຮັບປະເຄນເພສັດທັງ ໕ ເຫຼົ່ານັ້ນໃນການແລ້ວສັນໃນການ"

## ເລື້ອງເພສັດ ໕ ໃນເວລາວິການ

[໔໒໑] ສະໄໝນັ້ນ ພິກຂຸທັງຫຼາຍຮັບປະເຄນເພສັດ ໕ ໃນການແລ້ວສັນໃນການ ໂພຊະນາຫານຊະນິດທຳມະດາທີ່ສັນປະຈຳວັນຂອງພິກຂຸເຫຼົ່ານັ້ນຍັງບໍ່ອາດຍ່ອຍ ບໍ່ຕ້ອງກ່າວເຖິງໂພຊະນາຫານຊະນິດທີ່ມີໄຂມັນ ພິກຂຸເຫຼົ່ານັ້ນຈຶ່ງປ່ວຍດ້ວຍອາພາດທີ່ເກີດໃນລະດູສາຣະທະ ແລະເບື່ອພັດຕາຫານ ຍ້ອນເຫດ ໒ ປະການນັ້ນ ຈຶ່ງຈ່ອຍແຫ້ງ ໝອງຄ້ຳ ຫູ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງຫຼາຍຍິ່ງຂຶ້ນ

ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນພິກຂຸເຫຼົ່ານັ້ນ ຈຶ່ງຕັດຖາມທ່ານພຣະອານົນອີກວ່າ "ອານົນ ເປັນຫຍັງເວລານີ້ ພິກຂຸທັງຫຼາຍຈຶ່ງຈ່ອຍແຫ້ງ ໝອງຄ້ຳ ຫູ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງ"

ທ່ານພຣະອານົນຂາບທູນວ່າ "ເວລານີ້ ພິກຂຸທັງຫຼາຍຮັບປະເຄນເພສັດ ໕ ໃນການແລ້ວສັນໃນການ ໂພຊະນາຫານຊະນິດທຳມະດາທີ່ສັນປະຈຳວັນຂອງພິກຂຸເຫຼົ່ານັ້ນຍັງບໍ່ອາດຍ່ອຍ ບໍ່ຕ້ອງກ່າວເຖິງໂພຊະນາຫານຊະນິດທີ່ມີໄຂມັນ ພິກຂຸທັງຫຼາຍ ຈຶ່ງປ່ວຍດ້ວຍອາພາດ ທີ່ເກີດໃນລະດູສາຣະທະ ແລະເບື່ອພັດຕາຫານ ຍ້ອນເຫດ ໒ ປະການນັ້ນ ຈຶ່ງຈ່ອຍແຫ້ງ ໝອງຄ້ຳ ຫູ່າເຫຼືອງ ເສັ້ນເອັນຂຶ້ນສະພັ່ງຫຼາຍຍິ່ງຂຶ້ນ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື່ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮັບປະເຄນເພສັດ ໕ ສັນໄດ້ທັງໃນການແລະໃນເວລາວິການ"

## ເລື່ອງນ້ຳມັນແຫຼວທີ່ເປັນຢາ

[໔໑໔] ສະໄໝນັ້ນ ພິກຂຸທັງຫຼາຍຜູ້ເປັນໄຂ້ຕ້ອງການມັນແຫຼວທີ່ເປັນຢາ

ພິກຂຸທັງຫຼາຍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດມັນແຫຼວທີ່ເປັນຢາ ຄື ມັນແຫຼວໝີ ມັນແຫຼວປາ ມັນແຫຼວປາສະຫຼາມ[១] ມັນແຫຼວໝູ ມັນແຫຼວລາທີ່ຮັບປະເຄນໃນການ ຈຽວໃນການ ກອງໃນການແລ້ວສັນຄືກັບນ້ຳມັນ

ພິກຂຸທັງຫຼາຍ ຖ້າພິກຂຸຮັບປະເຄນມັນແຫຼວໃນເວລາວິການ ຈຽວໃນເວລາວິການ ກອງໃນເວລາວິການແລ້ວ ຖ້າພິກຂຸສັນມັນແຫຼວນັ້ນ ຕ້ອງອາບັດທຸກກົດ ໓ ໂຕ

ພິກຂຸທັງຫຼາຍ ຖ້າພິກຂຸຮັບປະເຄນມັນແຫຼວໃນການ ຈຽວໃນເວລາວິການ ກອງໃນເວລາວິການແລ້ວ ຖ້າພິກຂຸສັນມັນແຫຼວນັ້ນ ຕ້ອງອາບັດທຸກກົດ ໒ ໂຕ

ພິກຂຸທັງຫຼາຍ ຖ້າພິກຂຸຮັບປະເຄນມັນແຫຼວໃນການ ຈຽວໃນການ ກອງໃນເວລາວິການແລ້ວ ຖ້າພິກຂຸສັນມັນແຫຼວນັ້ນ ຕ້ອງອາບັດທຸກກົດ (໑ ໂຕ)

ພິກຂຸທັງຫຼາຍ ຖ້າພິກຂຸຮັບປະເຄນມັນແຫຼວໃນການ ຈຽວໃນການ ກອງໃນການແລ້ວ ຖ້າພິກຂຸສັນມັນແຫຼວນັ້ນ ບໍ່ຕ້ອງອາບັດ"

## ໑໔໑. ມູລາທິເພສັດຊະກະຖາ

## ວ່າດ້ວຍຊົງອະນຸຍາດເຄື່ອງຢາມີຮາກໄມ້ເປັນຕົ້ນ

## ເລື່ອງຮາກໄມ້ທີ່ເປັນຢາ

[໔໑໓] ສະໄໝນັ້ນ ພິກຂຸທັງຫຼາຍຜູ້ເປັນໄຂ້ ຕ້ອງການຮາກໄມ້ທີ່ເປັນຢາ

ພິກຂຸທັງຫຼາຍ ຈຶ່ງນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາກໄມ້ທີ່ເປັນຢາ ຄື ຂີ້ມິ້ນ ຂີງສົດ ວ່ານນ້ຳ ວ່ານເປາະ ອຸຕະພິດ ຂ່າ ແຝກ ແຫ້ວໝູ ຫຼືຮາກໄມ້ທີ່ເປັນຢາຊະນິດອື່ນທີ່ມີຢູ່ ເຊິ່ງບໍ່ແມ່ນຂອງຫຍ້ຳຂອງສັນ ຮັບປະເຄນແລ້ວເກັບໄວ້ໄດ້ຈົນຕະຫຼອດຊີບ ເມື່ອມີເຫດຈຳເປັນ ພິກຂຸຈຶ່ງສັນໄດ້ ເມື່ອບໍ່ມີເຫດຈຳເປັນ ພິກຂຸສັນ ຕ້ອງອາບັດທຸກກົດ"

## ເລື່ອງຮາກໄມ້ບົດທີ່ເປັນຢາ

ສະໄໝນັ້ນ ພິກຂຸທັງຫຼາຍຜູ້ເປັນໄຂ້ ຕ້ອງການຮາກໄມ້ທີ່ບົດເປັນຢາ

ພິກຂຸທັງຫຼາຍຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຫີນບົດ ລູກຫີນບົດ"

## ເລື່ອງນ້ຳຝາດທີ່ເປັນຢາ

ສະໄໝນັ້ນ ພິກຂຸທັງຫຼາຍຜູ້ເປັນໄຂ້ ຕ້ອງການນ້ຳຝາດທີ່ເປັນຢາ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳຝາດທີ່ເປັນຢາ ຄື ນ້ຳ ຝາດກະເດົາ ນ້ຳຝາດໂມກມັນ ນ້ຳຝາດຂີ້ກາ ນ້ຳຝາດເຄືອເຂົາຮໍ ນ້ຳຝາດກະຖິນພິມານ ຫຼື ນ້ຳຝາດທີ່ເປັນຢາຊະນິດອື່ນທີ່ມີຢູ່ ເຊິ່ງບໍ່ແມ່ນຂອງຫຍ້ຳຂອງສັນ ຮັບປະເຄນແລ້ວເກັບໄວ້ໄດ້ຈົນ ຕະຫຼອດຊີບ ເມື່ອມີເຫດຈຳເປັນ ພິກຂຸຈຶ່ງສັນໄດ້ ເມື່ອບໍ່ມີເຫດຈຳເປັນ ພິກຂຸສັນ ຕ້ອງອາບັດ ທຸກກົດ"

## ເລື່ອງໃບໄມ້ທີ່ເປັນຢາ

ສະໄໝນັ້ນ ພິກຂຸທັງຫຼາຍຜູ້ເປັນໄຂ້ຕ້ອງການໃບໄມ້ທີ່ເປັນຢາ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃບໄມ້ທີ່ເປັນຢາ ຄື ໃບ ກະເດົາ ໃບໂມກມັນ ໃບຂີ້ກາ ໃບອີ່ຕູ່ ໃບຝ້າຍ ຫຼືໃບໄມ້ທີ່ເປັນຢາຊະນິດອື່ນທີ່ມີຢູ່ ເຊິ່ງບໍ່ແມ່ນ ຂອງຫຍ້ຳຂອງສັນ ຮັບປະເຄນແລ້ວເກັບໄວ້ໄດ້ຈົນຕະຫຼອດຊີບ ເມື່ອມີເຫດຈຳເປັນ ພິກຂຸຈຶ່ງສັນ ໄດ້ ເມື່ອບໍ່ມີເຫດຈຳເປັນ ພິກຂຸສັນ ຕ້ອງອາບັດທຸກກົດ"

## ເລື່ອງໝາກໄມ້ທີ່ເປັນຢາ

ສະໄໝນັ້ນ ພິກຂຸທັງຫຼາຍຜູ້ເປັນໄຂ້ຕ້ອງການໝາກໄມ້ທີ່ເປັນຢາ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໝາກໄມ້ທີ່ເປັນຢາ ຄື ໝາກພິລັງຄະ ດີປີ ໝາກເພັດ ໝາກສົ້ມມໍ ສົ້ມມໍພິເພກ ໝາກຂາມປ້ອມ ໝາກໂກດ ຫຼືໝາກໄມ້ ທີ່ເປັນຢາຊະນິດອື່ນ ທີ່ມີຢູ່ ເຊິ່ງບໍ່ແມ່ນຂອງຫຍ້ຳຂອງສັນ ຮັບປະເຄນແລ້ວເກັບໄວ້ໄດ້ຈົນ

ຕະຫຼອດຊີບ ເມື່ອມີເຫດຈຳເປັນ ພິກຂຸຈຶ່ງສັນໄດ້ ເມື່ອບໍ່ມີເຫດຈຳເປັນ ພິກຂຸສັນ ຕ້ອງອາບັດທຸກກົດ"

## ເລື້ອງຢາງໄມ້ທີ່ເປັນຢາ

ສະໄໝນັ້ນ ພິກຂຸທັງຫຼາຍຜູ້ເປັນໄຂ້ ຕ້ອງການຢາງໄມ້ທີ່ເປັນຢາ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຢາງໄມ້ທີ່ເປັນຢາ ຄື ຫິງຄຸ ຢາງຊັ້ງວຈາກຫິງຄຸ ຢາງຊັ້ງວຈາກເປືອກຫິງຄຸ ຢາງຈາກຍອດຕົ້ນຕະກະ ຢາງຈາກໃບຕົ້ນຕະກະ ຢາງຊັ້ງວຈາກກ້ານຕົ້ນຕະກະ ກຳຍານ ຫຼືຢາງທີ່ເປັນຢາຊະນິດອື່ນທີ່ມີຢູ່ ເຊິ່ງບໍ່ແມ່ນຂອງຫຍໍ້າຂອງສັນ ຮັບປະເຄນແລ້ວເກັບໄວ້ໄດ້ຈົນຕະຫຼອດຊີບ ເມື່ອມີເຫດຈຳເປັນ ພິກຂຸຈຶ່ງສັນໄດ້ ເມື່ອບໍ່ມີເຫດຈຳເປັນ ພິກຂຸສັນ ຕ້ອງອາບັດທຸກກົດ"

## ເລື້ອງເກືອທີ່ເປັນຢາ

ສະໄໝນັ້ນ ພິກຂຸທັງຫຼາຍຜູ້ເປັນໄຂ້ ຕ້ອງການເກືອທີ່ເປັນຢາ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເກືອທີ່ເປັນຢາ ຄື ເກືອສະມຸດ ເກືອດຳ ເກືອສິນເທົາ ເກືອດິນໂປ່ງ ເກືອຕົ້ມ ຫຼືເກືອທີ່ເປັນຢາຊະນິດອື່ນທີ່ມີຢູ່ ເຊິ່ງບໍ່ແມ່ນຂອງຫຍໍ້າຂອງສັນ ຮັບປະເຄນແລ້ວເກັບໄວ້ໄດ້ຈົນຕະຫຼອດຊີບ ເມື່ອມີເຫດຈຳເປັນ ພິກຂຸຈຶ່ງສັນໄດ້ ເມື່ອບໍ່ມີເຫດຈຳເປັນ ພິກຂຸສັນ ຕ້ອງອາບັດທຸກກົດ"

## ເລື້ອງມູນງົວ ດິນໜຽວ ກາກນໍ້າຍ້ອມດັບກິ່ນໂຕ

[໒໖໒] ສະໄໝນັ້ນ ທ່ານພຣະເພລັດຖະສີສະ ຜູ້ເປັນພຣະອຸປັດຊາຂອງທ່ານພຣະອານົນເປັນພະຍາດຝີດາດ ຈີວອນຕິດກາຍຍ້ອນນໍ້າເຫຼືອງ ພວກພິກຂຸໃຊ້ນໍ້າຊຸບຜ້າເຫຼົ່ານັ້ນແລ້ວຄ່ອຍ ໆ ດຶງອອກມາ

ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປຕາມເສນາສະນະ ໄດ້ທອດພຣະເນດເຫັນພິກຂຸເຫຼົ່ານັ້ນ ກຳລັງໃຊ້ນໍ້າຊຸບຜ້າແລ້ວຄ່ອຍ ໆ ດຶງອອກມາ ຈຶ່ງສະເດັດເຂົ້າໄປຫາ ຕັດຖາມວ່າ "ພິກຂຸທັງຫຼາຍ ພິກຂຸນີ້ເປັນພະຍາດອັນໃດ"

ພິກຂຸທັງຫຼາຍຂາບທູນວ່າ "ພິກຂຸນີ້ເປັນພະຍາດຝີດາດ ຈີວອນຕິດກາຍຍ້ອນນໍ້າເຫຼືອງ ພວກຂ້າພຣະອົງໃຊ້ນໍ້າຊຸບຜ້າແລ້ວຄ່ອຍ ໆ ດຶງອອກມາ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຢາຜົງສຳລັບພິກຂຸຜູ້ເປັນຫິດ ຕຸ່ມພຸພອງ ຝີດາດ ຫຼືມີກິ່ນໂຕແຮງ ມູນງົວ ດິນໜຽວ ກາກນ້ຳຍ້ອມສຳລັບພິກຂຸຜູ້ບໍ່ເປັນໄຂ້ ພິກຂຸທັງຫຼາຍ ເຮົາອະນຸຍາດຄົກແລະສາກ”

## ເລື້ອງຢາຜົງແລະເຄື່ອງຮ່ອນຢາ

ສະໄໝນັ້ນ ພິກຂຸທັງຫຼາຍຜູ້ເປັນໄຂ້ ຕ້ອງການຢາຜົງທີ່ຮ່ອນແລ້ວ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດເຄື່ອງຮ່ອນຢາຜົງ”

## ພິກຂຸທັງຫຼາຍຜູ້ເປັນໄຂ້ຕ້ອງການຢາຜົງລະອຽດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າຮ່ອນຢາ”

## ເລື້ອງຊີ້ນດິບແລະເລືອດສົດ

ສະໄໝນັ້ນ ພິກຂຸອົງໜຶ່ງເປັນໄຂ້ຍ້ອນຖືກອະມະນຸດເຂົ້າສິງ ອາຈານແລະອຸປັດຊາຊ່ອຍກັນຮັກສາພິກຂຸນັ້ນ ແຕ່ບໍ່ສາມາດຮັກສາໃຫ້ຫາຍໄດ້ ພິກຂຸນັ້ນຍ່າງໄປທີ່ຮ້ານຂາຍໝູແລ້ວກິນຊີ້ນດິບ ດື່ມເລືອດສົດ ໆ ພະຍາດອະມະນຸດເຂົ້າສິງຂອງພິກຂຸນັ້ນຈຶ່ງສະງົບ[໑]

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດຊີ້ນດິບ ເລືອດສົດ ໃນເມື່ອມີພະຍາດອະມະນຸດເຂົ້າສິງ”

## ເລື້ອງຢາຢອດຕາ

[໔໖໕] ສະໄໝນັ້ນ ພິກຂຸອົງໜຶ່ງອາພາດເປັນໂຣກຕາ ພວກພິກຂຸຕ້ອງປະຄອງພິກຂຸນັ້ນໄປໃຫ້ຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່

ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປຕາມເສນາສະນະ ທອດພຣະເນດເຫັນພວກພິກຂຸກຳລັງ ປະຄອງພິກຂຸນັ້ນໄປໃຫ້ຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່ ຈຶ່ງສະເດັດເຂົ້າໄປຫາ ແລ້ວຕັດຖາມວ່າ “ພິກຂຸທັງຫຼາຍ ພິກຂຸນີ້ເປັນພະຍາດອັນໃດ”

ພວກພິກຂຸຂາບທູນວ່າ "ທ່ານອົງນີ້ອາພາດເປັນໂຣກຕາ ພວກຂ້າພຣະອົງຄອຍປະຄອງທ່ານໄປໃຫ້ຖ່າຍອຸດຈາຣະແດ່ ຖ່າຍປັດສາວະແດ່ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຢາຍອດຕາ ອັນໄດ້ແກ່ຢາທາຕາທີ່ປຸງດ້ວຍເຄື່ອງປຸງຫຼາຍແນວ ຢາທາຕາທີ່ເຮັດດ້ວຍເຄື່ອງປຸງຕ່າງ ໆ ຢາທາຕາທີ່ເກີດໃນກະແສນ້ຳທໍຣະດານກັບຄຳ ຂີ້ໄຟ"

## ເລື້ອງເຄື່ອງບົດຢາປະສົມຢາຕາ

### ພິກຂຸທັງຫຼາຍຕ້ອງການເຄື່ອງບົດຢາປະສົມຢາຕາ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ຈັນ ເກດສະໜາ ກະລຳພັກ ໃບຊຽງ ແຫ້ວໝູ"

## ເລື້ອງກັບຢາຕາ

ສະໄໝນັ້ນ ພິກຂຸທັງຫຼາຍເກັບຢາຕາຊະນິດຜົງໄວ້ໃນໂອ່ງແດ່ ໃນໂອແດ່ ປ່າຫຍ້າແດ່ ຝຸ່ນແດ່ປິວລົງໄປ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກັບຢາຕາ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ກັບຢາຕາຊະນິດຕ່າງ ໆ ເຮັດດ້ວຍຄຳ ເຮັດດ້ວຍເງິນມະນຸດທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ຄືຄະລິຫັດຜູ້ບໍຣິໂພກກາມ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ກັບຢາຕາຊະນິດຕ່າງ ໆ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດກັບຢາຕາເຮັດດ້ວຍກະດູກ ເຮັດດ້ວຍງາ ເຮັດດ້ວຍເຂົາ ເຮັດດ້ວຍໄມ້ອໍ້ ເຮັດດ້ວຍໄມ້ໄຜ່ ເຮັດດ້ວຍໄມ້ ເຮັດດ້ວຍຢາງໄມ້ ເຮັດດ້ວຍໝາກໄມ້ ເຮັດດ້ວຍໂລຫະ ເຮັດດ້ວຍເປືອກຫອຍສັງ"

ກັບຢາຕາບໍ່ມີຝາອັດ ຜົງຫຍ້າແດ່ ຝຸ່ນແດ່ປິວລົງໄປ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຝາອັດ"

ຝາອັດຕົກຈາກກັບຢາຕາ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ດ້າຍມັດພັນໄວ້ກັບກັບຢາຕາ"

ກັບຢາຕາແຕກ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ດ້າຍຖັກ"

## ເລື້ອງໄມ້ທາຢາຕາ

ສະໄໝນັ້ນ ພິກຂຸທັງຫຼາຍໃຊ້ນິ້ວມືທາຕາ ໜ່ວຍຕາຊໍ້າ

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ທາຢາຕາ"

ພວກພິກຂຸສັບພັກຄີໃຊ້ໄມ້ທາຢາຕາຊະນິດຕ່າງ ໆ ເຮັດດ້ວຍຄໍາ ເຮັດດ້ວຍເງິນ ຄົນທັງຫຼາຍຕໍາໜິ ປະນາມ ໂພນທະນາວ່າ "ຄືຄະລຶຫັດຜູ້ບໍລິໂພກການ"

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ໄມ້ທາຢາຕາຊະນິດຕ່າງ ໆ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດໄມ້ທາຢາຕາເຮັດດ້ວຍກະດູກ ເຮັດດ້ວຍງາ ເຮັດດ້ວຍເຂົາ ໆລໆ ເຮັດດ້ວຍເປືອກຫອຍສັງ"

## ເລື້ອງທີ່ເກັບໄມ້ທາຢາຕາ

ສະໄໝນັ້ນ ໄມ້ທາຢາຕາຕົກທີ່ພື້ນຈຶ່ງເປື້ອນ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດພາຊະນະ ສໍາລັບເກັບໄມ້ທາຢາຕາ"

ສະໄໝນັ້ນ ພິກຂຸທັງຫຼາຍໃຊ້ມືຖືກັບຢາຕາແດ່ ໄມ້ທາຢາຕາແດ່

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຖົງກັບຢາຕາ"

ຖົງກັບຢາຕາບໍ່ມີຫູສາຍພາຍ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດເຊືອກມັດເປັນສາຍພາຍ"

## ເລື້ອງນ້ຳມັນທາຫົວ

[໔໙໙] ສະໄໝນັ້ນ ທ່ານພຣະປິລິນທະວັດສະປວດຮ້ອນທີ່ຫົວ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳມັນທາຫົວ"

## ເລື້ອງນັດຢາ

ພຣະປິລິນທະວັດສະຍັງບໍ່ດີພະຍາດປວດຮ້ອນທີ່ຫົວ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດການນັດ"

ນ້ຳມັນທີ່ນັດໄຫຼອອກ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກ້ອງຢານັດ"

## ເລື້ອງກ້ອງຢານັດ

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ກ້ອງຢານັດຊະນິດຕ່າງ ໆ ເຮັດດ້ວຍຄຳ ເຮັດດ້ວຍເງິນ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ "ຄືຄະລືຫັດຜູ້ບໍຣິໂພກການ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ກ້ອງຢານັດຊະນິດຕ່າງ ໆ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດກ້ອງຢານັດເຮັດດ້ວຍກະດູກ ۷ລ۷ ເຮັດດ້ວຍເປືອກຫອຍສັງ"

ພຣະປິລິນທະວັດສະນັດໄດ້ບໍ່ທໍ່ກັນພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກ ເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກ້ອງຢານັດມີຫຼອດຄູ່"

## ເລື້ອງສູດຄວັນ

ພຣະປີລັນທະວັດສະຍັງບໍ່ດີພະຍາດປວດຫົວ
ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສູດຄວັນ"

## ເລື້ອງກ້ອງສູດຄວັນແລະຝາອັດກ້ອງສູດຄວັນ

ພິກຂຸທັງຫຼາຍຈູດກຽວຜ້າແລ້ວສູດຄວັນ ຄໍແສບ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກ້ອງສູດຄວັນ"

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ກ້ອງສູດຄວັນຊະນິດຕ່າງ ໆ ເຮັດດ້ວຍຄໍາ ເຮັດດ້ວຍເງິນ ຄົນທັງຫຼາຍຈຶ່ງຕໍາໜິ ປະນາມ ໂພນທະນາວ່າ "ຄືຄະລຶຫັດຜູ້ບໍຣິໂພກການ"

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍພິກຂຸບໍ່ເພິ່ງໃຊ້ກ້ອງສູດຄວັນຊະນິດຕ່າງ ໆ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດກ້ອງສູດຄວັນ ເຮັດດ້ວຍກະດູກ ເຮັດດ້ວຍງາ ເຮັດດ້ວຍເຂົາ ເຮັດດ້ວຍໄມ້ອໍ້ ເຮັດດ້ວຍໄມ້ໄຜ່ ເຮັດດ້ວຍໄມ້ ເຮັດດ້ວຍຢາງໄມ້ ເຮັດດ້ວຍໝາກໄມ້ ເຮັດດ້ວຍໂລຫະ ເຮັດດ້ວຍເປືອກຫອຍສັງ"

ສະໄໝນັ້ນ ກ້ອງສູດຄວັນບໍ່ມີຝາອັດ ໂຕສັດນ້ອຍ ໆ ເຂົ້າໄປໄດ້ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຝາອັດ"

ສະໄໝນັ້ນ ພິກຂຸທັງຫຼາຍໃຊ້ມືຖືກ້ອງສູດຄວັນ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຖົງກ້ອງສູດຄວັນ"

ກ້ອງສູດຄວັນຢູ່ລວມກັນຍ່ອມກະທົບກັນ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຖົງຄູ່"

ຖົງຄູ່ບໍ່ມີຫູສາຍພາຍພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍເຮົາອະນຸຍາດເຊືອກມັດເປັນສາຍພາຍ"

## ພຣະປີລິນທະວັດສະອາພາດເປັນໂຣກລົມ

## ເລື້ອງນໍ້າມັນຫຸງ

[໔໖໗] ສະໄໝນັ້ນ ທ່ານພຣະປີລິນທະວັດສະອາພາດເປັນໂຣກລົມ ພວກແພດກ່າວແນວນີ້ວ່າ “ຕ້ອງຫຸງນໍ້າມັນຖວາຍ”

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດນໍ້າມັນທີ່ຫຸງ”

## ເລື້ອງນໍ້າເມົາໃສ່ໃນນໍ້າມັນຫຸງ

ແພດຕ້ອງໃສ່ນໍ້າເມົາໃນນໍ້າມັນທີ່ຫຸງ ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃສ່ນໍ້າເມົາລົງໃນນໍ້າມັນທີ່ຫຸງໄດ້”

## ເລື້ອງນໍ້າມັນໃສ່ດ້ວຍນໍ້າເມົາຫຼາຍເກີນໄປ

ສະໄໝນັ້ນ ພວກພິກຂຸສັບພັກຄີຫຸງນໍ້າມັນໃສ່ນໍ້າເມົາລົງໄປເກີນຂະໜາດ ດື່ມນໍ້າມັນນັ້ນແລ້ວເມົາ

ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງດື່ມນໍ້າມັນໃສ່ນໍ້າເມົາລົງໄປເກີນຂະໜາດ ອົງໃດດື່ມ ເພິ່ງປັບອາບັດຕາມທໍາ[໑] ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ດື່ມນໍ້າມັນໃສ່ດ້ວຍນໍ້າເມົາຊະນິດທີ່ບໍ່ມີສີ ບໍ່ມີກິ່ນ ບໍ່ມີຣົດນໍ້າເມົາ”

## ເລື້ອງຊົງອະນຸຍາດນໍ້າມັນໃສ່ນໍ້າເມົາຫຼາຍໃຊ້ເປັນຢາທາ

ສະໄໝນັ້ນ ນໍ້າມັນທີ່ພິກຂຸຫຸງໃສ່ນໍ້າເມົາລົງໄປເກີນຂະໜາດຫຼາຍ

ລໍາດັບນັ້ນ ພິກຂຸທັງຫຼາຍໄດ້ປຶກສາກັນດັ່ງນີ້ວ່າ “ພວກເຮົາຈະປະຕິບັດໃນນໍ້າມັນໃສ່ນໍ້າເມົາລົງໄປເກີນຂະໜາດນີ້ ແນວໃດ” ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເກັບໄວ້ເປັນຢາທາ”

## ເລື້ອງເຕົ້ານ້ຳ

ສະໄໝນັ້ນ ທ່ານພຣະປິລິນທະວັດສະຫຼຸງນ້ຳມັນໄວ້ຫຼາຍ ບໍ່ມີພາຊະນະບັນຈຸນ້ຳມັນ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຕົ້ານ້ຳ ໓ ຊະນິດ ຄື ເຕົ້ານ້ຳເຮັດດ້ວຍໂລຫະ ເຕົ້ານ້ຳເຮັດດ້ວຍໄມ້ ເຕົ້ານ້ຳເຮັດດ້ວຍໝາກໄມ້"

## ເລື້ອງການຮົມເຫື່ອ

ສະໄໝນັ້ນ ທ່ານພຣະປິລິນທະວັດສະອາພາດເປັນໂຣກລົມຕາມອະໄວຍະວະ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດການເຂົ້າກະໂຈມຮົມເຫື່ອ"

## ເລື້ອງການຮົມດ້ວຍໃບໄມ້

### ທ່ານພຣະປິລິນທະວັດສະກໍຍັງບໍ່ຫາຍໂຣກລົມ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດການຮົມດ້ວຍໃບໄມ້"

## ເລື້ອງຮົມໃຫຍ່

ທ່ານພຣະປິລິນທະວັດສະກໍຍັງບໍ່ຫາຍໂຣກລົມ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດການຮົມໃຫຍ່"[໑]

## ເລື້ອງຮົມດ້ວຍໃບໄມ້ຕ່າງ ໆ

ທ່ານພຣະປິລິນທະວັດສະກໍຍັງບໍ່ຫາຍໂຣກລົມ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳຕົ້ມໃບໄມ້ຊະນິດຕ່າງ ໆ"

## ເລື້ອງອ່າງນ້ຳ

ທ່ານພຣະປິລິນທະວັດສະກໍຍັງບໍ່ຫາຍໂຣກລົມ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດອ່າງນ້ຳ"

## ເລື້ອງໃຊ້ເຂົາສັດກອກລະບາຍໂລຫິດອອກ

ສະໄໝນັ້ນ ທ່ານພຣະປິລິນທະວັດສະອາພາດເປັນໂຣກລົມຂັດຍອກຕາມຂໍ້

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລະບາຍໂລຫິດອອກ"

ທ່ານພຣະປິລິນທະວັດສະກໍຍັງບໍ່ຫາຍໂຣກລົມຂັດຍອກຕາມຂໍ້ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ເຂົາສັດກອກລະບາຍ ໂລຫິດອອກ"[໑]

## ເລື້ອງຢາທາຕີນ

ສະໄໝນັ້ນ ທ່ານພຣະປິລິນທະວັດສະຕີນແຕກ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຢາທາຕີນ"

## ເລື້ອງປຸງນ້ຳມັນທາຕີນ

ທ່ານພຣະປິລິນທະວັດສະຍັງບໍ່ດີພະຍາດຕີນແຕກ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ປຸງນ້ຳມັນທາຕີນ"

## ເລື້ອງພິກຂຸອາພາດເປັນຝີ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດເປັນຝີ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດການປາດ"

## ເລື່ອງນ້ຳຝາດ

ພິກຂຸນັ້ນຕ້ອງການນ້ຳຝາດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳຝາດ"

## ເລື່ອງງາບົດ

ພິກຂຸນັ້ນຕ້ອງການງາບົດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດງາບົດ"

## ເລື່ອງຢາພອກ

ພິກຂຸນັ້ນຕ້ອງການຢາພອກ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ ໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຢາພອກ"

## ເລື່ອງຜ້າພັນບາດ

ພິກຂຸນັ້ນຕ້ອງການຜ້າພັນບາດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າພັນບາດ"

## ເລື່ອງຊະບາດດ້ວຍນ້ຳແປ້ງເມັດຜັກກາດ

ບາດຄັນ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຊະດ້ວຍນ້ຳແປ້ງເມັດຜັກກາດ"

## ເລື່ອງຣົມບາດດ້ວຍຄວັນ

ບາດຊື້ນ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຣົມຄວັນ"

## ເລື່ອງໃຊ້ກ້ອນເກືອຕັດຊີ້ນປີ່ງ

ຊີ້ນປີ່ງຍື່ນອອກມາ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຕັດດ້ວຍກ້ອນເກືອ"

## ເລື້ອງນ້ຳມັນທາບາດ

ບາດບໍ່ປີ່ງ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳມັນທາບາດ"

## ເລື້ອງຜ້າອັດກັນນ້ຳມັນໄຫຼຍ້ອຍ

ນ້ຳມັນໄຫຼຍ້ອຍ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າເກົ່າສຳລັບຊັບນ້ຳມັນຮັກສາບາດທຸກຊະນິດ"

## ເລື້ອງຢາມະຫາວິກັດ ໔ ຢ່າງ

[໔໗໘] ສະໄໝນັ້ນ ພິກຂຸອົງໜຶ່ງຖືກງູກັດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ຢາມະຫາວິກັດ ໔ ຢ່າງ ຄື ຄູດ ມູດ ຂີ້ເຖົ່າ ດິນ"

## ເລື້ອງຮັບປະເຄນ

ສະໄໝນັ້ນ ພິກຂຸທັງຫຼາຍໄດ້ປຶກສາກັນດັ່ງນີ້ວ່າ "ຢາມະຫາວິກັດບໍ່ຕ້ອງຮັບປະເຄນຫຼືຕ້ອງຮັບປະເຄນ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮັບປະເຄນເມື່ອມີກັບປີຍະກາຣົກ ຖ້າບໍ່ມີກັບປີຍະກາຣົກ ໃຫ້ຈັບເອງໄດ້"

## ເລື້ອງນ້ຳດື່ມໃສ່ຄູດ

ສະໄໝນັ້ນ ພິກຂຸອົງໜຶ່ງດື່ມຢາພິດເຂົ້າໄປ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ດື່ມນ້ຳໃສ່ຄູດ"

ສະໄໝນັ້ນ ພິກຂຸທັງຫຼາຍໄດ້ປຶກສາກັນດັ່ງນີ້ວ່າ "ຄູດບໍ່ຕ້ອງຮັບປະເຄນ ຫຼືຈະຕ້ອງຮັບປະເຄນ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຄູດທີ່ພິກຂຸຈັບໄວ້ຂະນະກຳລັງຖ່າຍນັ້ນແລເປັນອັນປະເຄນແລ້ວ ຈຶ່ງບໍ່ຕ້ອງຮັບປະເຄນອີກ"

## ເລື້ອງພິກຂຸຖືກຢາແຝດດື່ມນ້ຳທີ່ລະລາຍຈາກດິນຕິດຜານໄຖ

[໔໙໙] ສະໄໝນັ້ນ ພິກຂຸອົງໜຶ່ງອາພາດຖືກຢາແຝດ[໑] ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ດື່ມນ້ຳທີ່ເຂົາລະລາຍດິນຮອຍໄຖຕິດຜານ"

## ເລື້ອງດື່ມນ້ຳດ່າງດິບ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດເປັນພະຍາດທ້ອງມັດ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ດື່ມນ້ຳດ່າງດິບ"

## ເລື້ອງດື່ມນ້ຳສົ້ມມໍດອງມູດງົວ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດເປັນພະຍາດຈ່ອຍເຫຼືອງ[໑]

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ດື່ມຢາປະສົມສົ້ມມໍດອງນ້ຳມູດ"[໔]

## ເລື້ອງລູບທາຂອງຫອມ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດເປັນພະຍາດຜິວໜັງ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ລູບທາດ້ວຍຂອງຫອມ"

## ເລື້ອງດື່ມຢາຖ່າຍ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດມີຜິດຜື່ນຂຶ້ນຕາມໂຕ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ດື່ມຢາຖ່າຍ"

## ເລື້ອງນ້ຳເຂົ້າໃສ

ພິກຂຸນັ້ນຕ້ອງການນ້ຳເຂົ້າໃສ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າໃຫ້ຊົງຊາບ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳເຂົ້າໃສ"

## ເລື້ອງນ້ຳຕົ້ມຖົ່ວຂຽວບໍ່ຂຸ້ນ

ພິກຂຸນັ້ນຕ້ອງການນ້ຳຕົ້ມຖົ່ວຂຽວບໍ່ຂຸ້ນ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳຕົ້ມຖົ່ວຂຽວບໍ່ຂຸ້ນ"

## ເລື້ອງນ້ຳຕົ້ມຖົ່ວຂຽວຂຸ້ນ

ພິກຂຸນັ້ນຕ້ອງການນ້ຳຕົ້ມຖົ່ວຂຽວຂຸ້ນເລັກໜ້ອຍ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳຕົ້ມຖົ່ວຂຽວຂຸ້ນເລັກໜ້ອຍ"

## เລື້ອງນ້ຳຕົ້ມຊີ້ນ

ພິກຂຸນັ້ນຕ້ອງການນ້ຳຕົ້ມຊີ້ນ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳຕົ້ມຊີ້ນ"

# ໑໗໘. ປີລິນທະວັດສະວັດຖຸ

## ວ່າດ້ວຍພຣະປີລິນທະວັດສະ

## ເລື້ອງພຣະປີລິນທະວັດສະຈະທຳຄວາມສະອາດເງີບພູ ແລະພຣະເຈົ້າພິມພິສານພຣະຣາດຊະທານຄົນງານວັດ

[໘໗໐] ສະໄໝນັ້ນ ທ່ານພຣະປີລິນທະວັດສະປະສົງຈະເຮັດທີ່ຫຼົບຫຼີກ ຈຶ່ງໃຫ້ພິກຂຸທັງຫຼາຍ ທຳຄວາມສະອາດເງີບພູໃນນະຄອນຣາດຊະຄືຶ

ຄັ້ງນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດສະເດັດເຂົ້າໄປຫາທ່ານພຣະປີລິນທະວັດສະເຖິງທີ່ພັກ ເມື່ອເຖິງແລ້ວ ໄດ້ຊົງອະພິວາດແລ້ວປະທັບນັ່ງ ທີ່ສົມຄວນ ພຣະເຈົ້າພິມພິສານຈອມທັບມະຄົດຣັດຜູ້ປະທັບນັ່ງ ທີ່ສົມຄວນແລ້ວ ໄດ້ຕັດກັບທ່ານພຣະປີລິນທະວັດສະດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າໃຫ້ພິກຂຸທັງຫຼາຍເຮັດຫຍັງ"

ທ່ານພຣະປີລິນທະວັດສະຖວາຍພຣະພອນວ່າ "ຂໍຖວາຍພຣະພອນ ອາຕະມາພາບປະສົງຈະເຮັດທີ່ຫຼົບຫຼີກ ຈຶ່ງໃຫ້ພິກຂຸທັງຫຼາຍທຳຄວາມສະອາດເງີບພູ"

ພຣະເຈົ້າພິມພິສານຕັດຖາມວ່າ "ພຣະຜູ້ເປັນເຈົ້າ ຕ້ອງການຄົນວັດແດ່ບໍ"

ທ່ານພຣະປີລິນທະວັດສະຖວາຍພຣະພອນວ່າ "ຂໍຖວາຍພຣະພອນ ພຣະຜູ້ມີພຣະພາກເຈົ້າບໍ່ຊົງອະນຸຍາດໃຫ້ມີຄົນວັດ"

ພຣະເຈົ້າພິມພິສານຕັດຖາມວ່າ "ຖ້າເປັນແນວນັ້ນ ພຣະຜູ້ເປັນເຈົ້າເພິ່ງທູນຖາມພຣະຜູ້ມີພຣະພາກເຈົ້າ ແລ້ວບອກຂ້ານ້ອຍດ້ວຍ"

ທ່ານພຣະປີລິນທະວັດສະທູນສະໜອງພຣະດຳຣັດແລ້ວ ຊີ້ແຈ່ງໃຫ້ພຣະອົງເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ຄັ້ງນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດຜູ້ເຊິ່ງທ່ານພຣະປີລິນທະວັດສະຊີ້ແຈ່ງໃຫ້

ເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນ ແຈ່ມໃສດ້ວຍທຳມີກະຖາ ໄດ້ສະເດັດລຸກຈາກອາຊະອາດ ຊົງອະພິວາດພຣະເຖຣະ ກະກະທຳປະທັກຂິນ ແລ້ວສະເດັດກັບໄປ

ຕໍ່ມາ ທ່ານພຣະປິລິນທະວັດສະສົ່ງທູດໄປສູ່ສຳນັກພຣະຜູ້ມີພຣະພາກເຈົ້າໃຫ້ຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພຣະເຈົ້າພິມພິສານຈອມທັບມະຄົດຣັດມີພຣະຣາຊະປະສົງຈະຖວາຍຄົນວັດ ຂ້າພຣະອົງຈະເພິ່ງປະຕິບັດແນວໃດ"

## ຊົງອະນຸຍາດຄົນງານວັດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ມີຄົນວັດ"

ແມ່ນເທື່ອທີ ໔ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ສະເດັດເຂົ້າໄປຫາທ່ານພຣະປິລິນທະ ວັດສະເຖິງທີ່ພັກ ເມື່ອເຖິງແລ້ວ ໄດ້ຊົງອະພິວາດແລ້ວປະທັບນັ່ງ ທີ່ສົມຄວນ ໄດ້ຕັດກັບທ່ານພຣະປິລິນທະວັດສະດັ່ງນີ້ວ່າ "ພຣະຜູ້ເປັນເຈົ້າ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຄົນວັດແລ້ວບໍ"

ທ່ານພຣະປິລິນທະວັດສະທູນວ່າ "ຂໍຖວາຍພຣະພອນ ຊົງອະນຸຍາດແລ້ວ"

ພຣະເຈົ້າພິມພິສານຕັດວ່າ "ຖ້າເປັນແນວນັ້ນ ຂ້ານ້ອຍຈະຖວາຍຄົນວັດແກ່ພຣະຜູ້ເປັນເຈົ້າ"

ຄັ້ງນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ຊົງຮັບທີ່ຈະຖວາຍຄົນວັດແກ່ທ່ານ ພຣະປິລິນທະວັດສະແລ້ວ ແຕ່ຊົງລືມ ເມື່ອເວລາຜ່ານໄປດົນ ຊົງຣະນຶກໄດ້ ຈຶ່ງຕັດຖາມມະຫາອຳໝາດຜູ້ສະໜອງຣາຊະກິດຄົນໜຶ່ງວ່າ "ເຮົາຖວາຍຄົນວັດທີ່ໃຫ້ສັນຍາໄວ້ແກ່ພຣະຜູ້ເປັນເຈົ້າແລ້ວບໍ"

ມະຫາອຳໝາດຂາບທູນວ່າ "ຂໍເດຊະ ຍັງບໍ່ໄດ້ຖວາຍຄົນວັດແກ່ພຣະຜູ້ເປັນເຈົ້າເລີຍ"

ພຣະເຈົ້າພິມພິສານຕັດວ່າ "ຜ່ານມາຈັກມື້ແລ້ວ"

ມະຫາອຳໝາດນັບຣາຕີແລ້ວຂາບທູນວ່າ "ຂໍເດຊະ ຜ່ານມາ ໕໐໐ ຣາຕີ"

ພຣະອົງຮັບສັ່ງວ່າ "ຖ້າເປັນແນວນັ້ນ ຈົ່ງຖວາຍຄົນວັດ ໕໐໐ ຄົນ ແກ່ພຣະຜູ້ເປັນເຈົ້າ"

ມະຫາອຳໝາດຂາບທູນຮັບສະໜອງພຣະຣາຊະໂອງການແລ້ວ ຈັດຄົນວັດໄປຖວາຍທ່ານພຣະປິລິນທະວັດສະ ຈຳນວນ ໕໐໐ ຄົນ ຕັ້ງໝູ່ບ້ານຂຶ້ນມາຕ່າງຫາກ ມີຊື່ຮຽກວ່າ ອາຣາມິກະຄາມແດ່ ປິລິນທະວັດສະຄາມແດ່

[໔໗໑] ສະໄໝນັ້ນ ທ່ານພຣະປິລິນທະວັດສະເປັນພຣະປະຈຳຕະກູນໃນໝູ່ບ້ານນັ້ນ ເຊົ້າມື້ໜຶ່ງ ທ່ານພຣະປິລິນທະວັດສະຄອງອັນຕະຣະວາສົກ ຖືບາດແລະຈີວອນເຂົ້າໄປບິນທະບາດໃນໝູ່ບ້ານປິລັນທະວັດສະຄາມ ຄັ້ງນັ້ນ ໃນໝູ່ບ້ານນັ້ນກຳລັງມີມະໂຫລະສົບ ພວກເດັກ ໆ ແຕ່ງ

ກາຍປະດັບດອກໄມ້ຫຼິ້ນຢູ່ ພໍດີທ່ານພຣະປີລິນທະວັດສະທ່ຽວບິນທະບາດມາຕາມລຳດັບໃນໝູ່ບ້ານປີລິນທະວັດສະຄາມ ມາເຖິງເຮືອນຂອງຄົນວັດຄົນໜຶ່ງແລ້ວໄດ້ນັ່ງເທິງອາສະນະທີ່ເຂົາຈັດຖວາຍ

ຂະນະນັ້ນ ທິດາຂອງສະຕີຄົນວັດເຫັນພວກເດັກນ້ອຍອື່ນແຕ່ງກາຍປະດັບດອກໄມ້ ຈຶ່ງຮ້ອງໄຫ້ຂໍວ່າ "ພໍ່ແມ່ ໂຜດໃຫ້ດອກໄມ້ ໂຜດໃຫ້ເຄື່ອງປະດັບແກ່ລູກແດ່"

ພຣະເຖຣະຖາມສະຕີນັ້ນວ່າ "ເດັກນ້ອຍນີ້ຢາກໄດ້ອັນໃດ"

ນາງຕອບວ່າ "ທ່ານຜູ້ຈະເລີນ ເດັກນ້ອຍນີ້ເຫັນພວກເດັກອື່ນແຕ່ງກາຍປະດັບດອກໄມ້ ຈຶ່ງຮ້ອງໄຫ້ຂໍພວງດອກໄມ້ແລະເຄື່ອງປະດັບວ່າ "ພໍ່ແມ່ໂຜດໃຫ້ດອກໄມ້ ໂຜດໃຫ້ເຄື່ອງປະດັບແກ່ລູກແດ່" ເຮົາຄົນຈົນຈະໄດ້ດອກໄມ້ແລະເຄື່ອງປະດັບຈາກໃສ"

ທ່ານພຣະປີລິນທະວັດສະຈຶ່ງຈັບວົງຫຍ້າອັນໜຶ່ງສົ່ງໃຫ້ພ້ອມກ່າວວ່າ "ທ່ານຈົ່ງ ໃສ່ວົງຫຍ້າອັນນີ້ທີ່ຫົວເດັກຍິງນັ້ນ"

ຍິງຄົນວັດຈັບວົງຫຍ້າໃສ່ທີ່ຫົວເດັກຍິງ ວົງຫຍ້າກາຍເປັນພວງດອກໄມ້ຄຳງົດງາມໜ້າເບິ່ງໜ້າຊົມ ພວງດອກໄມ້ຄຳແບບນີ້ແມ່ນໃນພຣະຣາດຊະຖານກໍຍັງບໍ່ມີ

ພວກຊາວບ້ານຂາບທູນພຣະເຈົ້າພິມພິສານວ່າ "ຂໍເດຊະ ທີ່ເຮືອນຄົນວັດນັ້ນມີພວງດອກໄມ້ຄຳງົດງາມໜ້າເບິ່ງໜ້າຊົມ ພວງດອກໄມ້ຄຳແບບນີ້ແມ່ນໃນພຣະຣາດຊະຖານກໍຍັງບໍ່ມີ ເຂົາເປັນທຸກໄຮ້ຈະໄດ້ມາຈາກໃສ ຄົງຈະໄດ້ມາຍ້ອນກະທຳໂຈຣະກຳຢ່າງແນ່ນອນ"

ພຣະເຈົ້າພິມພິສານຮັບສັ່ງໃຫ້ຄຸມຂັງຕະກູນຄົນວັດນັ້ນ

ຕໍ່ມາເຊົ້າວັນທີ ໔ ທ່ານພຣະປີລິນທະວັດສະຄອງອັນຕະຣະວາສົກ ຖືບາດແລະຈີວອນໄປບິນທະບາດທີ່ປີລິນທະວັດສະຄາມອີກ ເມື່ອທ່ຽວບິນທະບາດໄປຕາມລຳດັບໃນໝູ່ບ້ານ ປີລິນທະວັດສະຄາມ ຍ່າງກາຍໄປທາງທີ່ຢູ່ຄົນວັດຄົນນັ້ນຖາມຄົນຄຸ້ນເຄີຍວ່າ "ຄອບຄົວຄົນວັດນີ້ໄປໃສແລ້ວ"

ຊາວບ້ານຕອບວ່າ "ຄອບຄົວນີ້ຖືກຄຸມຂັງຍ້ອນເລື້ອງພວງດອກໄມ້ຄຳ ຂ້ານ້ອຍ"

ຕໍ່ຈາກນັ້ນທ່ານພຣະປີລິນທະວັດສະເຂົ້າໄປເຖິງພຣະຣາຊະນິເວດຂອງພຣະເຈົ້າພິມພິສານຈອມທັບມະຄົດຣັດ ເມື່ອເຖິງແລ້ວໄດ້ນັ່ງເທິງອາສະນະທີ່ເຂົາຈັດຖວາຍ

ລຳດັບນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ສະເດັດເຂົ້າໄປຫາພຣະເຖຣະຈົນເຖິງອາສະນະ ຊົງອະພິວາດແລ້ວປະທັບນັ່ງ ທີ່ສົມຄວນ

ທ່ານພຣະປີລິນທະວັດສະທູນຖາມພຣະເຈົ້າພິມພິສານຈອມທັບມະຄົດຣັດວ່າ "ຂໍຖວາຍພຣະພອນ ຄອບຄົວຄົນວັດຖືກຄຸມຂັງຍ້ອນເລື້ອງອັນໃດ"

ພຣະເຈົ້າພິມພິສານຈອມທັບມະຄົດຣັດຕັດວ່າ "ທີ່ເຮືອນເຂົາມີພວງດອກໄມ້ຄຳ ງົດງາມໜ້າເບິ່ງໜ້າຊົມ ພວງດອກໄມ້ຄຳແນວນີ້ແມ່ນໃນວັງກໍຍັງບໍ່ມີ ເຂົາເປັນຄົນທຸກໄຮ້ຈະໄດ້ມາຈາກໄສ ຄົງຈະໄດ້ມາຍ້ອນກະທຳໂຈຣະກຳຢ່າງແນ່ນອນ"

ບັດນັ້ນ ທ່ານພຣະປີລິນທະວັດສະໄດ້ອະທິຖານໃຫ້ຜາສາດ ຂອງພຣະເຈົ້າພິມພິສານເປັນຄຳ ຜາສາດກາຍເປັນຄຳໄປທັງຫຼັງ ແລ້ວທ່ານກໍຖວາຍພຣະພອນວ່າ "ຄຳຫຼວງຫຼາຍ ມະຫາບໍພິດໄດ້ມາຈາກໄສ" ພຣະເຈົ້າພິມພິສານຈອມທັບມະຄົດຣັດຕັດວ່າ "ຂ້ານ້ອຍຮູ້ແລ້ວ ນີ້ເປັນລິດທານຸພາບຂອງພຣະຜູ້ເປັນເຈົ້າ" ແລ້ວຮັບສັ່ງໃຫ້ປ່ອຍຄອບຄົວນັ້ນ

ພວກຊາວບ້ານຮູ້ຂ່າວວ່າ "ພຣະຜູ້ເປັນເຈົ້າປີລິນທະວັດສະສະແດງອິດທິປາຕິຫານອັນເປັນອຸດຕະຣິມະນຸດສະທຳໃນທ່າມກາງຣາຊະບໍລິສັດ" ພາກັນພໍໃຈເຫຼື້ອມໃສນຳເພສັດ ໕ ຄືເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜິ້ງ ນ້ຳອ້ອຍມາຖວາຍ ຕາມປົກກະຕິທ່ານພຣະປີລິນທະວັດສະກໍໄດ້ເພສັດ ໕ ຢູ່ສະ ເໝີ ທ່ານຈຶ່ງແບ່ງເພສັດໃຫ້ບໍລິສັດຂອງທ່ານ ແຕ່ບໍລິສັດຂອງທ່ານມັກຫຼາຍ ບັນຈຸເພສັດທີ່ໄດ້ມາແລ້ວໄວ້ໃນຕຸ່ມແດ່ ໃນໝໍ້ນ້ຳແດ່ ຈົນເຕັມແລ້ວເກັບໄວ້ ບັນຈຸລົງໃນໝໍ້ຕອງນ້ຳແດ່ ໃນຖົງຍ່າມແດ່ ແລ້ວຫ້ອຍໄວ້ທີ່ໜ້າຕ່າງ ເພສັດເຫຼົ່ານັ້ນຊຶມໄຫຼຍ້ອຍ ຈຶ່ງມີສັດຈຳພວກໜູເຕັມທົ່ວວິຫານ

ພວກຊາວບ້ານທ່ຽວໄປຕາມວິຫານພົບເຂົ້າຈຶ່ງພາກັນຕຳໜິ ປະນາມ ໂພນທະນາວ່າ "ພວກພຣະສະມະນະເຊື້ອສາຍສາກະຍະບຸດເຫຼົ່ານີ້ ມີເຮືອນຄັງເກັບຂອງຄືພຣະເຈົ້າພິມພິສານຈອມທັບມະຄົດຣັດ"

ພິກຂຸທັງຫຼາຍໄດ້ຍິນຊາວບ້ານຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພິກຂຸທັງຫຼາຍ ຈຶ່ງຄິດເພື່ອຄວາມມັກຫຼາຍແນວນີ້ນໍ" ເມື່ອພິກຂຸທັງຫຼາຍຕຳໜິພິກຂຸເຫຼົ່ານັ້ນໂດຍປະການຕ່າງ ໆ ແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

## ເລື້ອງສັນເພສັດທີ່ເກັບໄວ້ ໗ ມື້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸຄິດເພື່ອຄວາມມັກຫຼາຍແນວນັ້ນແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຮັບປະເຄນເພສັດທີ່ຄວນສຳລັບພິກຂຸໄຂ້ ຄື ເນີຍໃສ ເນີຍຂຸ້ນ ນ້ຳມັນ ນ້ຳເຜີ້ງ ນ້ຳອ້ອຍ ແລ້ວເກັບໄວ້ສັນໄດ້ ໗ ມື້ ເປັນຢ່າງຫຼາຍ ໃຫ້ເກີນກຳນົດນັ້ນໄປເພິ່ງປັບອາບັດຕາມທຳ"

**ເພສັດຊານຸນຍາຕະພານະວາຣະ ທີ ໑ ຈົບ**

## ໑໖໓. ຄຸລາທິອະນຸຊານະນາ

## ວ່າດ້ວຍຊົງອະນຸຍາດນ້ຳອ້ອຍປ່ຽງເປັນຕົ້ນ

## ເລື່ອງນ້ຳອ້ອຍປ່ຽງ

[໔໗໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນສາວັດຖີຕາມພຣະອັດທະຍາໄສແລ້ວ ສະເດັດໄປນະຄອນຣາດຊະຄຶ ໃນລະຫວ່າງທາງ ທ່ານພຣະກັງຂາເຣວະຕະແວ່ເຂົ້າໂຮງເຮັດນ້ຳອ້ອຍປ່ຽງ ເຫັນເຂົາປະສົມແປ້ງແດ່ ເຖົ່າແດ່ ລົງໃນນ້ຳອ້ອຍປ່ຽງ ຢຳເກງຢູ່ວ່າ "ນ້ຳອ້ອຍປ່ຽງໃສ່ອາມິດເປັນຂອງບໍ່ຄວນສັນໃນເວລາວິການ" ພ້ອມດ້ວຍບໍລິສັດບໍ່ສັນນ້ຳອ້ອຍປ່ຽງ ແມ່ນພິກຂຸທັງຫຼາຍທີ່ເຊື່ອຟັງທ່ານກໍພອຍບໍ່ສັນນ້ຳອ້ອຍປ່ຽງໄປດ້ວຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຊາວບ້ານປະສົມແປ້ງແດ່ເຖົ່າແດ່ ລົງໃນນ້ຳອ້ອຍປ່ຽງເພື່ອອັນໃດ"

ພິກຂຸທັງຫຼາຍຂາບທູນວ່າ "ເພື່ອໃຫ້ປ່ຽງນ້ຳອ້ອຍຕິດກັນແໜ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເຂົາປະສົມແປ້ງແດ່ ເຖົ່າແດ່ລົງໃນນ້ຳອ້ອຍປ່ຽງ ເພື່ອໃຫ້ປ່ຽງນ້ຳອ້ອຍຕິດກັນແໜ້ນ ນ້ຳອ້ອຍປ່ຽງນັ້ນກໍຍັງຄົງເປັນນ້ຳອ້ອຍປ່ຽງຄືເກົ່າ ເຮົາອະນຸຍາດໃຫ້ສັນນ້ຳອ້ອຍປ່ຽງໄດ້ຕາມສະບາຍ"

## ເລື້ອງຖົ່ວຂຽວ

ທ່ານພຣະກັງຂາເຣວະຕະເຫັນຖົ່ວຂຽວງອກຂຶ້ນໃນກອງອຸດຈາຣະລະຫວ່າງທາງ ຢຳເກງຢູ່ວ່າ "ຖົ່ວຂຽວເປັນຂອງບໍ່ຄວນ ເຖິງຕົ້ມແລ້ວກໍຍັງງອກໄດ້" ພ້ອມດ້ວຍບໍລິສັດບໍ່ສັນຖົ່ວຂຽວ ແມ່ນພວກພິກຂຸທີ່ເຊື່ອຟັງທ່ານກໍພອຍບໍ່ສັນຖົ່ວຂຽວໄປດ້ວຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ຖ້າຖົ່ວຂຽວແມ່ນທີ່ຕົ້ມສຸກແລ້ວແຕ່ຍັງງອກໄດ້ ເຮົາອະນຸຍາດໃຫ້ສັນໄດ້ຕາມສະບາຍ”

## ເລື້ອງຢາດອງໂລນະໂສວີຣະກະ

[໔໗໖] ສະໄໝນັ້ນ ພິກຂຸອົງໜຶ່ງອາພາດເປັນໂຣກລົມໃນທ້ອງ ຈຶ່ງດື່ມຢາດອງໂລນະໂສວີຣະກະ ໂຣກລົມສະງົບລົງ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸໄຂ້ສັນຢາດອງໂລນະໂສວີຣະກະໄດ້ຕາມສະບາຍ ແຕ່ຜູ້ບໍ່ເປັນໄຂ້ຕ້ອງໃສ່ນ້ຳສັນຄືກັບນ້ຳປານະ”

# ໑໖໘. ອັນໂຕວຸດຖາທິປະຕິກເຂປະກະຖາ

## ວ່າດ້ວຍຊົງຫ້າມການຫຸງຕົ້ມພາຍໃນເປັນຕົ້ນ

## ເລື້ອງອາຫານທີ່ຫຸງຕົ້ມເອງ

[໔໗໘] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປນະຄອນຣາດຊະຄຶ ປະທັບຢູ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງປະຊວນໂຣກລົມໃນ ພຣະອຸທອນ

ລຳດັບນັ້ນ ທ່ານພຣະອານົນດຳຣິວ່າ “ແຕ່ກ່ອນ ພຣະຜູ້ມີພຣະພາກເຈົ້າຊົງປະຊວນໂຣກລົມໃນພຣະອຸທອນ ກໍຊົງສຸກສະບາຍໄດ້ດ້ວຍເຂົ້າຕົ້ມປຸງດ້ວຍຂອງ ໓ ຢ່າງ” ຈຶ່ງອອກປາກຂໍງາແດ່ ເຂົ້າສານແດ່ ຖົ່ວຂຽວແດ່ ດ້ວຍຕົນເອງແລ້ວເກັບໄວ້ພາຍໃນ° ຕົ້ມເອງແລ້ວ ນ້ອມເຂົ້າໄປຖວາຍພຣະຜູ້ມີພຣະພາກເຈົ້າດ້ວຍຂາບທູນວ່າ “ຂໍພຣະຜູ້ມີພຣະພາກເຈົ້າໂຜດດື່ມເຂົ້າຕົ້ມ ປຸງດ້ວຍຂອງ ໓ ຢ່າງເທີ້ນ ຂ້ານ້ອຍ”

## ພຸດທະປະເພນີ

ພຣະຕະຖາຄົດເຈົ້າທັງຫຼາຍຊົງຊາບເລື້ອງ ຕັດຖາມກໍມີ ບໍ່ຕັດຖາມກໍມີ ຊົງຮູ້ການອັນຄວນ ຕັດຖາມກໍມີ ບໍ່ຕັດຖາມກໍມີ ຕັດຖາມເລື້ອງທີ່ເປັນປະໂຫຍດ ບໍ່ຕັດຖາມເລື້ອງທີ່ບໍ່ເປັນປະໂຫຍດ ຍ້ອນພຣະຕະຖາຄົດເຈົ້າທັງຫຼາຍ ຊົງກຳຈັດເລື້ອງທີ່ບໍ່ເປັນປະໂຫຍດດ້ວຍອະຣິຍະມັກແລ້ວ

ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍສອບຖາມພິກຂຸທັງຫຼາຍດ້ວຍເຫດ ໔ ປະການ ຄືຈະຊົງສະແດງທຳຢ່າງໜຶ່ງ ຈະຊົງບັນຍັດສິກຂາບົດແກ່ພຣະສາວົກຢ່າງໜຶ່ງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກທ່ານພຣະອານົນມາຮັບສັ່ງຖາມວ່າ "ທ່ານໄດ້ເຂົ້າຕົ້ມນີ້ມາຈາກໃສ ອານົນ"

ຄັ້ງນັ້ນ ທ່ານພຣະອານົນໄດ້ຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ອານົນ ການເຮັດແນວນີ້ບໍ່ສົມຄວນ ບໍ່ຄວນຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ເປັນຫຍັງທ່ານຈຶ່ງຂົນຂວາຍເພື່ອຄວາມມັກຫຼາຍແນວນີ້ນໍ ອາຫານທີ່ເກັບໄວ້ພາຍໃນ ທີ່ຫຸງຕົ້ມພາຍໃນ ທີ່ຫຸງຕົ້ມເອງ ຈັດເປັນອະກັບປີຍະ[១] ການກະທຳແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນອາຫານທີ່ເກັບໄວ້ພາຍໃນ ທີ່ຫຸງຕົ້ມພາຍໃນ ທີ່ຫຸງຕົ້ມເອງ ອົງໃດສັນ ຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ຖ້າເກັບອາຫານໄວ້ພາຍໃນ ຫຸງຕົ້ມພາຍໃນ ຫຸງຕົ້ມເອງ ຖ້າພິກຂຸສັນອາຫານນັ້ນ ຕ້ອງອາບັດທຸກກົດ ໓ ໂຕ

ພິກຂຸທັງຫຼາຍ ຖ້າເກັບອາຫານໄວ້ພາຍໃນ ຫຸງຕົ້ມພາຍໃນ ຄົນອື່ນຫຸງຕົ້ມໃຫ້ ຖ້າພິກຂຸສັນອາຫານນັ້ນ ຕ້ອງອາບັດທຸກກົດ ໒ ໂຕ

ພິກຂຸທັງຫຼາຍ ຖ້າເກັບອາຫານໄວ້ພາຍໃນ ແຕ່ຫຸງຕົ້ມພາຍນອກ ຫຸງຕົ້ມເອງ ຖ້າພິກຂຸສັນອາຫານນັ້ນ ຕ້ອງອາບັດທຸກກົດ ໒ ໂຕ

ພິກຂຸທັງຫຼາຍ ຖ້າເກັບອາຫານໄວ້ພາຍນອກ ແຕ່ຫຸງຕົ້ມພາຍໃນ ຫຸງຕົ້ມເອງ ຖ້າພິກຂຸສັນອາຫານນັ້ນ ຕ້ອງອາບັດທຸກກົດ ໒ ໂຕ

ພິກຂຸທັງຫຼາຍ ຖ້າເກັບອາຫານໄວ້ພາຍໃນ ແຕ່ຫຸງຕົ້ມພາຍນອກ ຄົນອື່ນຫຸງຕົ້ມໃຫ້ ຖ້າພິກຂຸສັນອາຫານນັ້ນ ຕ້ອງອາບັດທຸກກົດໂຕດຽວ

ພິກຂຸທັງຫຼາຍ ຖ້າເກັບອາຫານໄວ້ພາຍນອກ ຫຸງຕົ້ມພາຍໃນ ຄົນອື່ນຫຸງຕົ້ມໃຫ້ ຖ້າພິກຂຸສັນອາຫານນັ້ນ ຕ້ອງອາບັດທຸກກົດໂຕດຽວ

ພິກຂຸທັງຫຼາຍ ຖ້າເກັບອາຫານໄວ້ພາຍນອກ ຫຸງຕົ້ມພາຍນອກ ຫຸງຕົ້ມເອງ ຖ້າພິກຂຸສັນອາຫານນັ້ນ ຕ້ອງອາບັດທຸກກົດໂຕດຽວ

ພິກຂຸທັງຫຼາຍ ຖ້າເກັບອາຫານໄວ້ພາຍນອກ ຫຸງຕົ້ມພາຍນອກ ຄົນອື່ນຫຸງຕົ້ມໃຫ້ ຖ້າພິກຂຸສັນອາຫານນັ້ນ ບໍ່ຕ້ອງອາບັດ

## ເລື້ອງອຸ່ນພັດຕາຫານ

ສະໄໝນັ້ນ ພິກຂຸທັງຫຼາຍສົນທະນາວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມພັດຕາຫານທີ່ຫຸງຕົ້ມເອງ" ຈຶ່ງຢຳເກງໂພຊະນາຫານທີ່ອຸ່ນໃໝ່

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອຸ່ນພັດຕາຫານໄດ້"

## ເລື້ອງໃຫ້ເກັບອາຫານພາຍໃນແລະຫຸງຕົ້ມເອງເມື່ອເວລາຈຳເປັນ

ສະໄໝນັ້ນ ນະຄອນຣາດຊະຄຶເກີດອຶດຢາກ ຄົນທັງຫຼາຍນຳເກືອແດ່ ນ້ຳມັນແດ່ ເຂົ້າສານແດ່ ຂອງສັນແດ່ມາທີ່ອາຣາມ ພິກຂຸທັງຫຼາຍໃຫ້ເກັບຂອງເຫຼົ່ານັ້ນໄວ້ພາຍນອກ ສັດຕ່າງ ໆ ຄາບໄປກິນແດ່ ພວກໂຈນລັກເອົາໄປແດ່

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດ ໃຫ້ເກັບໄວ້ພາຍໃນໄດ້"

ພວກກັບປິຍະກາຣົກເກັບອາຫານໄວ້ພາຍໃນແລ້ວຫຸງຕົ້ມພາຍນອກ ພວກຄົນກິນເດືອນພາກັນ ຫ້ອມລ້ອມ ພິກຂຸທັງຫຼາຍສັນບໍ່ສະດວກ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຫຸງຕົ້ມພາຍໃນໄດ້"

ໃນເວລາອຶດຢາກ ພວກກັບປິຍະກາຣົກ໌ນຳເອົາສິ່ງຂອງໄປເປັນຈຳນວນຫຼາຍກວ່າຖວາຍພິກຂຸທັງຫຼາຍພຽງເລັກໜ້ອຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຫຸງຕົ້ມເອງ ພິກຂຸທັງຫຼາຍ ເຮົາອະນຸຍາດອາຫານທີ່ເກັບໄວ້ພາຍໃນ ທີ່ຫຸງຕົ້ມພາຍໃນ ທີ່ຫຸງຕົ້ມເອງ"

## ໑໖໕. ອຸກຄະຫິຕະປະຕິກຄະຫະນາ

## ວ່າດ້ວຍການຮັບປະເຄນຂອງທີ່ຈັບຕ້ອງແລ້ວ

## ເລື້ອງຮັບປະເຄນໝາກໄມ້ທີ່ຈັບຕ້ອງແລ້ວ

[໔໗໕] ສະໄໝນັ້ນ ພິກຂຸຫຼາຍອົງຢູ່ຈຳຕະຫຼອດພັນສາໃນແຄວັ້ນກາສີແລ້ວ ເດີນທາງໄປນະຄອນຣາດຊະຄຶເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ລະຫວ່າງທາງ ບໍ່ໄດ້ໂພຊະນາຫານທຳມະ

ດາຫຼືທີ່ ປະນີດຕາມຕ້ອງການເລີຍ ເຖິງວ່າຂອງຫຍ້ຳຄືໝາກໄມ້ຈະມີຫຼາຍ ແຕ່ບໍ່ມີກັບປີຍະກາຣົກ ພາກັນລຳບາກ ຈຶ່ງເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ທີ່ພຣະເວລຸວັນ ເຂດນະຄອນຣາດຊະຄຶ ສະຖານທີ່ໃຫ້ເຫຍື່ອກະແຕ ຖວາຍບັງຄົມແລ້ວນັ່ງຢູ່ທີ່ສົມຄວນ

ການທີ່ພຣະພຸດທະເຈົ້າຊົງປາໄສກັບພຣະອາຄັນຕຸກະທັງຫຼາຍ ນັ້ນເປັນພຸດທະປະເພນີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ເດີນທາງມາບໍ່ລຳບາກບໍ ແລະພວກທ່ານມາຈາກໃສ"

ພິກຂຸທັງຫຼາຍຂາບທູນວ່າ "ຍັງສະບາຍດີຂ້ານ້ອຍ ຍັງພໍເປັນຢູ່ໄດ້ຂ້ານ້ອຍ ຂໍພຣະຣາດຊະທານພຣະວະໂຣກາດ ພວກຂ້າພຣະອົງຈຳພັນສາໃນແຄວ້ນກາສີ ເດີນທາງມາເມືອງຣາດຊະຄຶເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ລະຫວ່າງທາງບໍ່ໄດ້ໂພຊະນາຫານທຳມະດາຫຼືທີ່ປະນີດຕາມຕ້ອງການ ແມ່ນຂອງຫຍ້ຳຄືໝາກໄມ້ຈະມີຫຼາຍ ແຕ່ກໍຫາກັບປີຍະກາຣົກບໍ່ໄດ້ ດັ່ງນັ້ນຈຶ່ງເດີນທາງມາລຳບາກ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸເຫັນຂອງຫຍ້ຳຄືໝາກໄມ້ບ່ອນໃດ ເຖິງບໍ່ມີກັບປີຍະກາຣົກ ເຮົາອະນຸຍາດໃຫ້ຈັບນຳໄປເອງ ພົບກັບປີຍະກາຣົກແລ້ວວາງໄວ້ເທິງພື້ນດິນໃຫ້ເຂົາປະເຄນແລ້ວສັນໄດ້ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮັບປະເຄນສິ່ງຂອງທີ່ຈັບຕ້ອງແລ້ວ"

## ເລື້ອງພາມຖວາຍງາແລະນ້ຳເຜີ້ງ

[໔໗໖] ສະໄໝນັ້ນ ພາມຄົນໜຶ່ງມີງາໃໝ່ແລະນ້ຳເຜີ້ງໃໝ່ ຄັ້ງນັ້ນ ພາມນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງຖວາຍງາໃໝ່ແລະນ້ຳເຜີ້ງໃໝ່ແກ່ພິກຂຸສົງມີພຣະພຸດທະເຈົ້າຊົງເປັນປະທານ" ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຂາບທູນປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈ ພໍເປັນທີ່ຣະນຶກເຖິງກັນແລະກັນແລ້ວຢືນຢູ່ທີ່ສົມຄວນ ພາມນັ້ນຜູ້ຢືນຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂໍພຣະໂຄດົມຜູ້ຈະເລີນພ້ອມທັງພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງ ເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນ" ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ຄັ້ງນັ້ນ ພາມນັ້ນຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວຈຶ່ງກັບໄປ ເມື່ອຜ່ານຣາຕີນັ້ນໄປ ພາມສັ່ງໃຫ້ກຽມຂອງຫຍ້ຳຂອງສັນອັນປະນີດແລ້ວໃຫ້ຄົນໄປຂາບທູນພັດຕາການພຣະຜູ້ມີພຣະພາກເຈົ້າວ່າ "ພຣະໂຄດົມຜູ້ຈະເລີນ ເຖິງເວລາແລ້ວ ພັດຕາຫານສຳເລັດແລ້ວ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນສະເດັດໄປນິເວດຂອງພາມພ້ອມພິກຂຸສົງ ປະທັບນັ່ງເທິງພຣະພຸດທະອາດທີ່ຈັດຖວາຍ ເຂົາໄດ້

ນຳຂອງຫຍ້ຳຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງ ກະ
ທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຊົງຫ້າມພັດຕາຫານແລ້ວ ລະພຣະຫັດຈາກບາ
ດ ຈຶ່ງໄດ້ນັ່ງເຝົ້າຢູ່ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພາມນັ້ນເຫັນແຈ້ງ ຊວນໃຫ້
ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີ
ກະຖາແລ້ວຊົງລຸກຈາກອາສະນະສະເດັດກັບ

ເມື່ອພຣະອົງສະເດັດກັບບໍ່ດົນ ພາມນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຕັ້ງໃຈວ່າ ຈະ
ຖວາຍງາໃໝ່ ແລະນ້ຳເຜີ້ງໃໝ່ຈຶ່ງໄດ້ນິມົນພິກຂຸສົງມີພຣະພຸດທະເຈົ້າເປັນປະທານ ແຕ່ກັບລືມຊ້ຳ
ເຮົາເພິ່ງໃຫ້ເຂົາຈັດງາໃໝ່ແລະນ້ຳເຜີ້ງໃໝ່ບັນຈຸຂວດແລະໝໍ້ນຳໄປອາຮາມ" ແລ້ວໃຫ້ຈັດງາໃໝ່
ແລະນ້ຳເຜີ້ງໃໝ່ບັນຈຸຂວດແລະໝໍ້ນຳໄປອາຮາມ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດ
ບ່ອນຢູ່ ເມື່ອເຖິງແລ້ວໄດ້ຢືນຢູ່ ທີ່ສົມຄວນ ແລ້ວຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະ
ໂຄດົມຜູ້ຈະເລີນ ຂ້າພຣະອົງຕັ້ງໃຈຈະຖວາຍງາໃໝ່ແລະນ້ຳເຜີ້ງໃໝ່ຈຶ່ງໄດ້ນິມົນພິກຂຸສົງມີພຣະ
ພຸດທະເຈົ້າເປັນປະທານ ແຕ່ລືມຖວາຍ ຂໍພຣະໂຄດົມຜູ້ຈະເລີນໂຜດຮັບງາໃໝ່ແລະນ້ຳເຜີ້ງໃໝ່
ຂອງຂ້າພຣະອົງເທີ້ນ" ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ຖ້າເປັນແນວນັ້ນທ່ານຈົ່ງຖວາຍພິກ
ຂຸທັງຫຼາຍ"

ສະໄໝນັ້ນ ເປັນເວລາອຶດຢາກ ພິກຂຸທັງຫຼາຍຮັບຂອງເລັກໜ້ອຍແລ້ວຫ້າມໄວ້ແດ່
ພິຈາລະນາແລ້ວຫ້າມແດ່ ເປັນອັນວ່າ ພຣະສົງລ້ວນເປັນຜູ້ບອກຫ້າມ ພັດຕາຫານແລ້ວທັ້ງຫຼາຍ
ພິກຂຸທັງຫຼາຍຢຳເກງຢູ່ຈຶ່ງບໍ່ຍອມຮັບປະເຄນ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພວກທ່ານຮັບປະເຄນສັນເທີ້ນ ເຮົາ
ອະນຸຍາດໃຫ້ພິກຂຸຜູ້ສັນແລ້ວບອກຫ້າມພັດຕາຫານແລ້ວ ສັນໂພຊະນາຫານທີ່ບໍ່ເປັນເງື່ອນທີ່ນຳ
ມາຈາກທີ່ສັນໄດ້"

## ໑໖໖. ປະຕິກຄະຫິຕາທິອະນຸຊານະນາ

## ວ່າດ້ວຍຊົງອະນຸຍາດໃຫ້ສັນຂອງທີ່ຮັບປະເຄນໄວ້ເປັນຕົ້ນ

## ເລື້ອງຂອງສັນທີ່ຮັບປະເຄນໄວ້ຕອນເຊົ້າ

[໔໗໗] [໑]ສະໄໝນັ້ນ ຕະກູນອຸປັດຖາກຂອງທ່ານພຣະອຸປະນັນທະສາກະຍະບຸດ ສົ່ງ
ຂອງຫຍ້ຳໄປຖວາຍສົງດ້ວຍແຈ້ງວ່າ "ຂໍມອບໃຫ້ພຣະຜູ້ເປັນເຈົ້າອຸປະນັນທະເປັນຜູ້ຖວາຍສົງ"
ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດກຳລັງເຂົ້າໄປບິນທະບາດໃນໝູ່ບ້ານພໍດີ ຄົນທັງຫຼາຍ

ໄປເຖິງອາຣາມໄດ້ຖາມພິກຂຸທັງຫຼາຍວ່າ "ພຣະຜູ້ເປັນເຈົ້າທັງຫຼາຍ ພຣະຜູ້ເປັນເຈົ້າອຸປະນັນທະໄປໃສ"

ພິກຂຸທັງຫຼາຍຕອບວ່າ "ອຸປາສິກາທັງຫຼາຍ ທ່ານອຸປະນັນທະສາກະຍະບຸດອົງນັ້ນເຂົ້າໄປບິນທະບາດໃນໝູ່ບ້ານ"

ຄົນເຫຼົ່ານັ້ນຂາບຮຽນວ່າ "ພຣະຜູ້ເປັນເຈົ້າທັງຫຼາຍ ຂອງຫຍໍ້ານີ້ຂໍມອບໃຫ້ພຣະຜູ້ເປັນເຈົ້າອຸປະນັນທະເປັນຜູ້ຖວາຍສົງ"

ພິກຂຸທັງຫຼາຍນຳເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຖ້າເປັນແນວນັ້ນພວກທ່ານຈົ່ງຮັບປະເຄນເກັບໄວ້ຈົນກວ່າອຸປະນັນທະຈະກັບມາ"

ຄັ້ງນັ້ນ ທ່ານພຣະອຸປະນັນທະສາກະຍະບຸດເຂົ້າໄປຢ້ຽມຕະກູນກ່ອນເວລາສັນ ກັບມາເຖິງຕອນກາງເວັນ ເວລານັ້ນເປັນເວລາອຶດຢາກ ພິກຂຸທັງຫຼາຍຮັບສິ່ງຂອງເລັກໜ້ອຍແລ້ວຫ້າມແດ່ ພິຈາລະນາແລ້ວຫ້າມແດ່ ເປັນອັນວ່າ ພຣະສົງລ້ວນເປັນຜູ້ບອກຫ້າມພັດຕາຫານແລ້ວ ພິກຂຸທັງຫຼາຍຢຳເກງຢູ່ຈຶ່ງບໍ່ຍອມຮັບປະເຄນ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພວກທ່ານຮັບປະເຄນສັນເທີ້ນ ເຮົາອະນຸຍາດໃຫ້ພິກຂຸສັນແລ້ວບອກຫ້າມພັດຕາຫານແລ້ວ ສັນໂພຊະນາຫານທີ່ບໍ່ເປັນເດນທີ່ຮັບປະເຄນໄວ້ກ່ອນເວລາສັນໄດ້"

## ເລື່ອງພຣະສາຣີບຸດອາພາດຮ້ອນໃນກາຍ

[໔໗໘] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນຣາດຊະຄຶຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນສາວັດຖີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນສາວັດຖີ ແລ້ວໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນທິກະເສດຖີໃນນະຄອນສາວັດຖີນັ້ນ

ສະໄໝນັ້ນ ທ່ານພຣະສາຣີບຸດອາພາດຮ້ອນໃນກາຍ

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະເຂົ້າໄປຫາທ່ານພຣະສາຣີບຸດ ຮອດບ່ອນຢູ່ແລ້ວໄດ້ກ່າວກັບທ່ານພຣະສາຣີບຸດດັ່ງນີ້ວ່າ "ທ່ານສາຣີບຸດ ແຕ່ກ່ອນທ່ານອາພາດຮ້ອນໃນກາຍ ກັບມີຄວາມສຸກສະບາຍດ້ວຍຢາອັນໃດ"

ທ່ານພຣະສາຣີບຸດຕອບວ່າ "ທ່ານຜູ້ມີອາຍຸ ຂ້ານ້ອຍມີຄວາມສຸກສະບາຍດ້ວຍເຫງົ້າບົວແລະຮາກບົວ"

ລຳດັບນັ້ນ ທ່ານພຣະມະຫາໂມກຄັນລານະຫາຍໂຕຈາກພຣະເຊຕະວັນມາຜາກົດທີ່ຝັ່ງສະໂບກຂະຣະນີມັນທາກິນີໄວຄືຄົນມີກຳລັງຢຽດແຂນອອກຫຼືຄູ້ແຂນເຂົ້າ

ຊ້າງໂຕໜຶ່ງເຫັນທ່ານພຣະມະຫາໂມກຄັນລານະມາແຕ່ໄກ ບັດແລ້ວຈຶ່ງໄດ້ກ່າວກັບທ່ານພຣະມະຫາໂມກຄັນລານະດັ່ງນີ້ວ່າ "ນິມົນພຣະຜູ້ເປັນເຈົ້າມະຫາໂມກຄັນລານະມາເທີ້ນ ພຣະຜູ້ເປັນເຈົ້າມາດີ ຕ້ອງການອັນໃດ ຈະຖວາຍອັນໃດດີນໍ"

ທ່ານພຣະມະຫາໂມກຄັນລານະຕອບວ່າ "ອາດຕະມາຕ້ອງການເຫງົ້າບົວກັບຮາກບົວ"

ຊ້າງນັ້ນສັ່ງຊ້າງອີກໂຕໜຶ່ງວ່າ "ທ່ານຈົ່ງຖວາຍເຫງົ້າບົວກັບຮາກບົວຕາມຕ້ອງການແດ່ພຣະຜູ້ເປັນເຈົ້າ" ຊ້າງໂຕນັ້ນລົງສະໂບກຂະຣະນີມັນທາກິນີ ໃຊ້ງວງດຶງເຫງົ້າບົວແລະຮາກບົວລ້າງນ້ຳຈົນສະອາດ ມ້ວນເປັນຫໍ່ແລ້ວເຂົ້າໄປຫາທ່ານພຣະມະຫາໂມກຄັນລານະ

ຄັ້ງນັ້ນ ທ່ານພຣະມະຫາໂມກຄັນລານະຫາຍໂຕຈາກຝັ່ງສະໂບກຂະຣະນີມັນທາກິນີ ມາຜາກົດໂຕທີ່ພຣະເຊຕະວັນວິຫານ ຄືຄົນມີກຳລັງຢຽດອອກຫຼືຄູ້ແຂນເຂົ້າ ແມ່ນຊ້າງ ເຊືອກນັ້ນກໍຫາຍຈາກຝັ່ງສະໂບກຂະຣະນີມັນທາກິນີ ມາຜາກົດໂຕທີ່ພຣະເຊຕະວັນວິຫານ ປະເຄນເຫງົ້າບົວແລະຮາກບົວແກ່ທ່ານພຣະມະຫາໂມກຄັນລານະ ແລ້ວຫາຍໂຕໄປຈາກພຣະເຊຕະວັນມາຜາກົດທີ່ຝັ່ງສະໂບກຂະຣະນີມັນທາກິນີ

ຕໍ່ມາ ທ່ານພຣະມະຫາໂມກຄັນລານະນ້ອມເຫງົ້າບົວແລະຮາກບົວເຂົ້າໄປຖວາຍທ່ານພຣະສາຣີບຸດ ເມື່ອທ່ານພຣະສາຣີບຸດສັນເຫງົ້າບົວແລະຮາກບົວ ອາພາດຮ້ອນໃນກາຍກໍຫາຍທັນທີ ເຫງົ້າບົວແລະຮາກບົວຍັງເຫຼືອຢູ່ເປັນຈຳນວນຫຼາຍ

ສະໄໝນັ້ນ ເກີດອຶດຢາກ ພິກຂຸທັງຫຼາຍຮັບຂອງເລັກໜ້ອຍແລ້ວຫ້າມແດ່ ພິຈາລະນາແລ້ວຫ້າມແດ່ ເປັນອັນວ່າພຣະສົງລ້ວນເປັນຜູ້ຫ້າມພັດຕາຫານແລ້ວ ພິກຂຸທັງຫຼາຍຢຳເກງຢູ່ ຈຶ່ງບໍ່ຍອມຮັບປະເຄນ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພວກທ່ານຮັບປະເຄນສັນເທີ້ນ ເຮົາອະນຸຍາດໃຫ້ພິກຂຸສັນແລ້ວຫ້າມພັດຕາຫານແລ້ວ ສັນໂພຊະນາຫານທີ່ບໍ່ເປັນເງື່ອນ ທີ່ເກີດໃນປ່າ ທີ່ເກີດໃນກໍບົວໄດ້"

## ເລື້ອງສັນໝາກໄມ້ທີ່ປ້ອນເມັດອອກ

ສະໄໝນັ້ນ ຂອງສັນຄືໝາກໄມ້ມີຫຼວງຫຼາຍໃນນະຄອນສາວັດຖີ ແຕ່ບໍ່ມີກັບປິຍະກາຣົກ ພິກຂຸ ທັງຫຼາຍຢຳເກງຢູ່ຈຶ່ງບໍ່ສັນໝາກໄມ້

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສັນໝາກໄມ້ທີ່ໃຊ້ປູກພັນບໍ່ໄດ້ ໝາກໄມ້ທີ່ປ້ອນເມັດອອກແລ້ວຍັງບໍ່ເຮັດກັບປະກໍສັນໄດ້"

# ໑໙໗. ສັດຖຸກຳມະປະຕິກເຂປະກະຖາ

## ວ່າດ້ວຍການຊົງຫ້າມເຮັດສັດຖກຳ

## ເລື້ອງຣິດສີດວງທະວານ

[໔໗໙] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນສາວັດຖີຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນຣາດຊະຄື ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນຣາດຊະຄື ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕ ໃນນະຄອນຣາດຊະຄືນັ້ນ

ສະໄໝນັ້ນ ພິກຂຸອົງໜຶ່ງອາພາດເປັນຣິດສີດວງທະວານ ນາຍແພດອາກາສະໂຄດກຳລັງທຳການປາດດ້ວຍອາວຸດ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປຕາມເສນາສະນະ ສະເດັດເຂົ້າໄປທາງທີ່ຢູ່ຂອງພິກຂຸນັ້ນ ນາຍແພດອາກາສະໂຄດເຫັນພຣະຜູ້ມີພຣະພາກເຈົ້າກຳລັງສະເດັດມາແຕ່ໄກຈຶ່ງຂາບ ທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ພຣະໂຄດົມຜູ້ຈະເລີນໂຜດສະເດັດມາທອດພຣະເນດວັດຈະມັກ ຂອງພິກຂຸອົງນີ້ ຄືປາກເຫັຍ”

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງພຣະດຳຣິວ່າ “ໂມຄະບຸຣຸດນີ້ເຍີ້ຍຫຍັນເຮົາ” ຈຶ່ງສະເດັດ ກັບຈາກບ່ອນນັ້ນແລ້ວຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ໃນວິຫານຫຼັງນັ້ນມີພິກຂຸເປັນໄຂ້ບໍ”

ພິກຂຸທັງຫຼາຍຂາບທູນວ່າ “ມີຢູ່ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ “ພິກຂຸທັງຫຼາຍ ພິກຂຸອົງນັ້ນອາພາດເປັນພະຍາດອັນໃດ”

ພິກຂຸທັງຫຼາຍຂາບທູນວ່າ “ພິກຂຸນັ້ນເປັນຣິດສີດວງທະວານ ນາຍແພດອາກາສະໂຄດກຳລັງທຳການປາດດ້ວຍອາວຸດ ຂ້ານ້ອຍ”

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ “ການກະທຳຂອງໂມຄະບຸຣຸດນັ້ນບໍ່ສົມຄວນບໍ່ຄວນຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ເປັນຫຍັງໂມຄະບຸຣຸດນັ້ນຈຶ່ງໃຫ້ເຮັດການປາດດ້ວຍອາວຸດໃນບ່ອນແຄບນໍ ໃນບ່ອນແຄບມີຜິວຊີ້ນອ່ອນ ບາດຫາຍຍາກ ປາດລຳບາກ ພິກຂຸທັງຫຼາຍ ການເຮັດແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ

ໆລໆ" ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມິກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຫ້ປາດດ້ວຍອາວຸດໃນບ່ອນແຄບ ອົງໃດໃຫ້ປາດ ຕ້ອງອາບັດຖຸນລັດໄຈ"

## ເລື້ອງຊົງຫ້າມເຮັດວັດຖຸກຳ

ສະໄໝນັ້ນ ພວກພິກຂຸສັບພັກຄີຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງຫ້າມປາດດ້ວຍອາວຸດ" ຈຶ່ງຫຼືບໃຫ້ກະທຳການບີບທົວຣິດສີດວງ

ບັນດາພິກຂຸຜູ້ມັກໜ້ອຍ ໆລໆ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງໃຫ້ກະທຳການບີບທົວຣິດສີດວງນໍ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸສັບພັກຄີໃຫ້ກະທຳການບີບທົວຣິດສີດວງ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນເລື້ອງຈິງ ຂ້ານ້ອຍ" ໆລໆ ເມື່ອຊົງຕຳໜິແລ້ວ ຊົງສະແດງທຳມິກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຫ້ປາດທະວານໜັກດ້ວຍອາວຸດຫຼືບີບທົວຣິດສີດວງ ປະມານ ໒ ນີ້ວຮອບ ໆ ທີ່ແຄບ ອົງໃດໃຫ້ຜ່າຫຼືໃຫ້ບີບຕ້ອງອາບັດຖຸນລັດໄຈ"

## ໑໗໓. ມະນຸດສະມັງສະປະຕິກເຂປະກະຖາ

## ວ່າດ້ວຍຊົງຫ້າມສັນຊີ້ນມະນຸດ

## ເລື້ອງອຸປາສິກາສຸບປີຍາປາດຊີ້ນຂາອ່ອນຖວາຍ

[໒໓໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນຣາດຊະຄຶຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນພາຣານະສີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນພາຣານະສີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າອິສິປະຕະນະມະລືຄະທາຍະວັນ ໃນນະຄອນພາຣານະສີນັ້ນ

ສະໄໝນັ້ນ ອຸປາສົກສຸບປີຍະແລະອຸປາສິກາສຸບປີຍາ ທັງ ໒ ຄົນມີສັດທາທັງເປັນທາຍົກເປັນກັບປີຍະກາຣົກ ເປັນຜູ້ບຳລຸງພຣະສົງໃນນະຄອນພາຣານະສີ ມື້ໜຶ່ງອຸປາສິກາສຸບປີຍາໄປທີ່ອາຮາມ ຍ່າງທ່ຽວໄປຕາມວິຫານແລະບໍລິເວນທົ່ວທຸກແຫ່ງແລ້ວຖາມພິກຂຸທັງຫຼາຍວ່າ "ພິກຂຸອົງໃດອາພາດ ອົງໃດຈະໃຫ້ເຮົານຳອັນໃດມາຖວາຍ ຂ້ານ້ອຍ"

ສະໄໝນັ້ນ ພິກຂຸອົງໜຶ່ງດື່ມຢາຖ່າຍ ລຳດັບນັ້ນ ທ່ານໄດ້ກ່າວກັບອຸປາສິກາສຸບປິຍາ ດັ່ງນີ້ວ່າ "ແມ່ອອກ ອາດຕະມາດື່ມຢາຖ່າຍ ອາດຕະມາຕ້ອງການນ້ຳຕົ້ມຊີ້ນ"

ອຸປາສິກາສຸບປິຍາກ່າວວ່າ "ພຣະຜູ້ເປັນເຈົ້າ ຂ້ານ້ອຍຈະນຳມາຖວາຍເປັນພິເສດ" ແລ້ວ ກັບໄປເຮືອນສັ່ງຄົນຮັບໃຊ້ວ່າ "ເຈົ້າຈົ່ງໄປຫາຊື້ຊີ້ນສັດທີ່ມີຂາຍມາ"[໑]

ຄົນຮັບໃຊ້ຮັບຄຳແລ້ວໄປທ່ຽວຫາຊື້ຊີ້ນທົ່ວນະຄອນພາຣານະສີກໍບໍ່ເຫັນຊີ້ນສັດທີ່ມີຂາຍ ລຳດັບນັ້ນ ຄົນຮັບໃຊ້ນັ້ນຈຶ່ງກັບເຂົ້າໄປຫາອຸປາສິກາສຸບປິຍາບອກວ່າ "ຍາແມ່ ບໍ່ມີຊີ້ນສັດທີ່ເຂົາ ຂາຍ ມື້ນີ້ເປັນມື້ຫ້າມຂ້າສັດ"

ຄັ້ງນັ້ນ ອຸປາສິກາສຸບປິຍາໄດ້ມີຄວາມຄິດດັ່ງນີ້ວ່າ "ພິກຂຸເປັນໄຂ້ອົງນັ້ນເມື່ອບໍ່ໄດ້ສັນນ້ຳ ຕົ້ມຊີ້ນ ອາພາດຈະກຳເຣີບຫຼືເຖິງມໍຣະນະພາບໄດ້ ການທີ່ເຮົາຮັບຄຳແລ້ວບໍ່ຈັດຫາໄປຖວາຍບໍ່ ສົມຄວນເລີຍ" ຈຶ່ງໄດ້ຈັບມີດຊອຍຊີ້ນມາປາດຊີ້ນຂາອ່ອນຕົນສົ່ງໃຫ້ຍິງຮັບໃຊ້ສັ່ງວ່າ "ນາງ ເຈົ້າ ຈົ່ງຕົ້ມຊີ້ນນີ້ແລ້ວນຳໄປຖວາຍພິກຂຸໄຂ້ທີ່ວິຫານຫຼັງນັ້ນ ແລະໃຜຖາມເຖິງເຮົາກໍຈົ່ງບອກວ່າເຮົາ ເປັນໄຂ້" ແລ້ວໃຊ້ຜ້າຫົ່ມພັນຂາເຂົ້າຫ້ອງນອນເທິງຕຽງ

ລຳດັບນັ້ນ ອຸປາສົກສຸບປິຍະໄປເຮືອນຖາມຍິງຮັບໃຊ້ວ່າ "ແມ່ສຸບປິຍາໄປໃສ" ຍິງຮັບໃຊ້ ຕອບວ່າ "ຍາພໍ່ ຍາແມ່ສຸບປິຍານັ້ນນອນຢູ່ໃນຫ້ອງ"

ອຸປາສົກສຸບປິຍະເຂົ້າໄປຫາແລ້ວ ໄດ້ກ່າວກັບອຸປາສິກາສຸບປິຍາດັ່ງນີ້ວ່າ "ເຈົ້າເປັນຫຍັງ ຈຶ່ງນອນ"

ອຸປາສິກາຕອບວ່າ "ຂ້ອຍບໍ່ສະບາຍ"

ອຸປາສົກຖາມວ່າ "ເຈົ້າເປັນພະຍາດອັນໃດ"

ອຸປາສິກາຈຶ່ງເລົ່າເລື້ອງນັ້ນໃຫ້ອຸປາສົກສຸບປິຍະຮູ້

ຄັ້ງນັ້ນ ອຸປາສົກສຸບປິຍະແຈ່ມໃສ ເບີກບານໃຈວ່າ "ໜ້າອັດສະຈັນຈິງ ທ່ານຜູ້ຈະເລີນ ບໍ່ ເຄີຍຜາກົດ ທ່ານຜູ້ຈະເລີນ ແມ່ສຸບປິຍາມີສັດທາຈົນວ່າສະລະຊີ້ນຕົນເອງ ສິ່ງໃດອື່ນເປັນຫຍັງ ນາງຈະໃຫ້ບໍ່ໄດ້" ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍ ອະພິວາດແລ້ວນັ່ງ ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍພຣະຜູ້ມີພຣະພາ ກເຈົ້າພ້ອມດ້ວຍພິກຂຸສົງຈົ່ງຮັບພັດຕາຫານຂອງຂ້າພຣະອົງ ເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ຄັ້ງນັ້ນ ອຸປາສົກສຸບປິຍະຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກ ອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວກັບໄປ

ເມື່ອຜ່ານຣາຕີນັ້ນໄປ ອຸປາສົກສຸບປິຍະສັ່ງໃຫ້ຈັດຂອງຫຍ້ຳຂອງສັນອັນປະນີດແລ້ວໃຫ້ຄົນໄປຂາບທູນພັດຕະການພຣະຜູ້ມີພຣະພາກເຈົ້າວ່າ "ເຖິງເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນສະເດັດໄປນິເວດຂອງອຸປາສົກສຸບປິຍະ ປະທັບນັ່ງເທິງອາສະນະທີ່ຈັດຖວາຍພ້ອມພິກຂຸສົງ

ລຳດັບນັ້ນ ອຸປາສົກສຸບປິຍະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດແລ້ວຢືນທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບອຸປາສົກສຸບປິຍະດັ່ງນີ້ວ່າ "ອຸປາສິກາສຸບປິຍາຢູ່ທີ່ໃດ"
ອຸປາສົກຂາບທູນວ່າ "ນາງບໍ່ສະບາຍ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເປັນແນວນັ້ນ ຂໍໃຫ້ນາງມາເທີ້ນ"
ອຸປາສົກຂາບທູນວ່າ "ນາງບໍ່ສາມາດມາໄດ້ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າເປັນແນວນັ້ນ ທ່ານຊ່ອຍໂຈມມາເທີ້ນ"

ອຸປາສົກສຸບປິຍະປະຄອງພັນລະຍາມາເຝົ້າ ທັນທີທີ່ນາງໄດ້ເຫັນພຣະຜູ້ມີພຣະພາກເຈົ້າບາດໃຫຍ່ ກັບຫາຍເປັນປົກກະຕິ ມີຜິວພັນພຽງສະນິດເກີດໂລມະຊາດ

ລຳດັບນັ້ນ ອຸປາສົກສຸບປິຍະແລະອຸປາສິກາສຸບປິຍາແຈ່ມໃສ ເບີກບານໃຈວ່າ "ໜ້າອັດສະຈັນຈິງ ທ່ານຜູ້ຈະເລີນ ບໍ່ເຄີຍຜາກົດ ທ່ານຜູ້ຈະເລີນ ພຣະຕະຖາຄົດຊົງມີລິດຫຼາຍ ມີອານຸພາບຫຼາຍ ພຽງໄດ້ເຫັນພຣະອົງທີ່ນັ້ນ ບາດໃຫຍ່ກັບຫາຍເປັນປົກກະຕິ ມີຜິວພັນພຽງສະນິດເກີດໂລມະຊາດ" ແລ້ວນຳຂອງຫຍ້ຳຂອງສັນອັນປະນີດມາປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຊົງຫ້າມພັດຕາຫານແລ້ວ ລະພຣະຫັດຈາກບາດ ຈຶ່ງໄດ້ນັ່ງເຝົ້າຢູ່ທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ອຸປາສົກສຸບປິຍະແລະອຸປາສິກາສຸບປິຍາເຫັນແຈ້ງຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຊົງລຸກຈາກອາສະນະແລ້ວສະເດັດກັບ

## ເລື້ອງຊົງຫ້າມສັນຊີ້ນມະນຸດ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ຊົງສອບຖາມພວກພິກຂຸວ່າ "ພິກຂຸທັງຫຼາຍ ໃຜນໍອອກປາກຂໍຊີ້ນກັບອຸປາສິກາສຸບປິຍາ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແນວນີ້ ພິກຂຸອົງນັ້ນຈຶ່ງຂາບທູນວ່າ "ຂ້າພຣະອົງໄດ້ອອກປາກຂໍຊີ້ນກັບອຸປາສິກາສຸບປິຍາ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ເຂົານຳມາຖວາຍແລ້ວບໍ"
ພິກຂຸຂາບທູນວ່າ "ນຳມາຖວາຍແລ້ວ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ທ່ານສັນແລ້ວບໍ"
ພິກຂຸຂາບທູນວ່າ "ຂ້າພຣະອົງສັນແລ້ວ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ທ່ານພິຈາລະນາແລ້ວບໍ"
ພິກຂຸຂາບທູນວ່າ "ຂ້າພຣະອົງບໍ່ໄດ້ພິຈາລະນາ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ເປັນຫຍັງທ່ານຍັງບໍ່ໄດ້ພິຈາລະນາເລີຍ ຈຶ່ງສັນຊີ້ນບໍ ທ່ານສັນຊີ້ນມະນຸດແລ້ວ ໂມຄະບຸຣຸດ ການກະທຳຂອງທ່ານບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ໆລໆ" ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາຣັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຄົນທັງຫຼາຍຜູ້ມີສັດທາເຫຼື້ອມໃສມີຢູ່ ຄົນແມ່ນເຫຼົ່ານັ້ນໄດ້ສະລະຊີ້ນຂອງຕົນຖວາຍພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນຊີ້ນມະນຸດ ອົງໃດສັນ ຕ້ອງອາບັດຖຸນລັດໄຈ ອັນໜຶ່ງ ພິກຂຸຍັງບໍ່ໄດ້ພິຈາລະນາ ບໍ່ເພິ່ງສັນຊີ້ນ ອົງໃດສັນ ຕ້ອງອາບັດທຸກກົດ"

## ໑໖໙. ຫັດຖີມັງສາທິປະຕິກເຂປະກະຖາ

## ວ່າດ້ວຍຊົງຫ້າມສັນຊີ້ນຊ້າງເປັນຕົ້ນ

### ເລື້ອງຊົງຫ້າມສັນຊີ້ນຊ້າງ

[໘໗໑] ສະໄໝນັ້ນ ຊ້າງຫຼວງລົ້ມ ໃນເວລາອຶດຢາກ ຄົນທັງຫຼາຍພາກັນກິນຊີ້ນຊ້າງ ໄດ້ຖວາຍແກ່ພິກຂຸທັງຫຼາຍຜູ້ທ່ຽວບິນທະບາດ ພວກພິກຂຸຈຶ່ງສັນຊີ້ນຊ້າງ

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພຣະສະມະນະເຊື້ອສາຍສາກະຍະບຸດຈຶ່ງສັນຊີ້ນຊ້າງບໍ ຊ້າງເປັນຣາດຊະພາຫະນະ ຖ້າພຣະຣາຊາຊົງຊາບຄົງບໍ່ພໍພຣະຫະໄທພິກຂຸທັງຫຼາຍເປັນແນ່"

ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນຊີ້ນຊ້າງ ອົງໃດສັນຕ້ອງອາບັດທຸກກົດ"

## ເລື້ອງຊົງຫ້າມສັນຊີ້ນມ້າ

ສະໄໝນັ້ນ ມ້າຫຼວງຕາຍ ໃນເວລາອຶດຢາກ ຄົນທັງຫຼາຍພາກັນກິນຊີ້ນມ້າ ໄດ້ຖວາຍແກ່ພິກຂຸທັງຫຼາຍຜູ້ທ່ຽວບິນທະບາດ ພວກພິກຂຸຈຶ່ງສັນຊີ້ນມ້າ

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍ ສາກະຍະບຸດຈຶ່ງສັນຊີ້ນມ້ານໍ ມ້າເປັນຣາດຊະພາຫະນະ ຖ້າພຣະຣາຊາຊົງຊາບຄົງບໍ່ພໍພຣະທະໄທພິກຂຸທັງຫຼາຍເປັນແນ່"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນຊີ້ນມ້າ ອົງໃດສັນ ຕ້ອງອາບັດທຸກກົດ"

## ເລື້ອງຊົງຫ້າມສັນຊີ້ນໝາ

ສະໄໝນັ້ນ ໃນເວລາອຶດຢາກ ຄົນທັງຫຼາຍພາກັນກິນຊີ້ນໝາ ໄດ້ຖວາຍແກ່ພິກຂຸທັງຫຼາຍຜູ້ທ່ຽວບິນທະບາດ ພວກພິກຂຸຈຶ່ງສັນຊີ້ນໝາ

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍ ສາກະຍະບຸດຈຶ່ງສັນຊີ້ນໝານໍ ໝາເປັນສັດໜ້າລັງກຽດສົກກະປົກ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນຊີ້ນໝາ ອົງໃດສັນຕ້ອງອາບັດ ທຸກກົດ"

## ເລື້ອງຊົງຫ້າມສັນຊີ້ນງູ

ສະໄໝນັ້ນ ໃນເວລາອຶດຢາກ ຄົນທັງຫຼາຍພາກັນກິນຊີ້ນງູ ໄດ້ຖວາຍແກ່ພິກຂຸທັງຫຼາຍຜູ້ທ່ຽວບິນທະບາດ ພວກພິກຂຸຈຶ່ງສັນຊີ້ນງູ

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍ ສາກະຍະບຸດຈຶ່ງສັນຊີ້ນງູນໍ ງູເປັນສັດໜ້າກຽດໜ້າຊັງ"

ຝ່າຍພະຍານາກສຸປັດສະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ໄດ້ຢືນທີ່ສົມຄວນ ພະຍານາກສຸປັດສະເຊິ່ງຢືນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ນາກງູທີ່ບໍ່ສັດທາ ບໍ່ເຫຼື້ອມໃສມີຢູ່ ນາກເຫຼົ່ານັ້ນ ເພິ່ງບຽດບຽນພິກຂຸແມ່ນດ້ວຍເຫດເລັກໜ້ອຍໄດ້ ຂ້ານ້ອຍ ຂໍປະທານວະໂຣກາດ ພຣະຜູ້ເປັນເຈົ້າທັງຫຼາຍບໍ່ເພິ່ງສັນຊີ້ນງູເລີຍ"

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພະຍານາກສຸປັດສະເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ລຳດັບນັ້ນ ພະຍານາກສຸປັດສະຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າກະທຳປະທັກຂິນແລ້ວຈາກໄປ

ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາ ຍ້ອນເລື້ອງນີ້ເປັນຕົ້ນເຫດຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນຊີ້ນງູ ອົງໃດສັນ ຕ້ອງອາບັດທຸກກົດ"

## ເລື້ອງຊົງຫ້າມສັນຊີ້ນຣາດຊະສີ

ສະໄໝນັ້ນ ພວກນາຍພານຂ້າຣາດຊະສີກິນ ໄດ້ຖວາຍແກ່ພິກຂຸທັງຫຼາຍຜູ້ທ່ຽວບິນທະບາດ ພິກຂຸທັງຫຼາຍສັນຊີ້ນຣາດຊະສີແລ້ວຢູ່ໃນປ່າ ຣາດຊະສີໄລ່ຕະຄຸບພິກຂຸຍ້ອນໄດ້ກິ່ນຊີ້ນຣາດຊະສີ

ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນຊີ້ນຣາດຊະສີ ອົງໃດສັນ ຕ້ອງອາບັດທຸກກົດ"

## ເລື້ອງຊົງຫ້າມສັນຊີ້ນເສືອໂຄ່ງ

ສະໄໝນັ້ນ ພວກນາຍພານຂ້າເສືອໂຄ່ງແລ້ວກິນ ໄດ້ຖວາຍແກ່ພິກຂຸທັງຫຼາຍຜູ້ທ່ຽວບິນທະບາດ ພິກຂຸທັງຫຼາຍສັນຊີ້ນເສືອໂຄ່ງແລ້ວຢູ່ໃນປ່າ ເສືອໂຄ່ງໄລ່ຕະຄຸບພິກຂຸຍ້ອນໄດ້ກິ່ນຊີ້ນເສືອໂຄ່ງ

ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນຊີ້ນເສືອໂຄ່ງ ອົງໃດສັນຕ້ອງອາບັດທຸກກົດ"

## ເລື້ອງຊົງຫ້າມສັນຊີ້ນເສືອເຫຼືອງ

ສະໄໝນັ້ນ ພວກນາຍພານຂ້າເສືອເຫຼືອງແລ້ວກິນ ໄດ້ຖວາຍແກ່ທັງຫຼາຍພິກຂຸຜູ້ທ່ຽວບິນທະບາດ ພິກຂຸທັງຫຼາຍສັນຊີ້ນເສືອເຫຼືອງແລ້ວຢູ່ໃນປ່າ ເສືອເຫຼືອງໄລ່ຕະຄຸບພິກຂຸຍ້ອນໄດ້ກິ່ນຊີ້ນເສືອເຫຼືອງ

ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນຊີ້ນເສືອເຫຼືອງ ອົງໃດສັນ ຕ້ອງອາບັດທຸກກົດ"

## ເລື້ອງຊົງຫ້າມສັນຊີ້ນໝີ

ສະໄໝນັ້ນ ພວກນາຍພານຂ້າໝີແລ້ວກິນ ໄດ້ຖວາຍແກ່ພິກຂຸທັງຫຼາຍຜູ້ທ່ຽວບິນທະບາດ ພິກຂຸທັງຫຼາຍສັນຊີ້ນໝີແລ້ວຢູ່ໃນປ່າ ໝີໄລ່ຕະຄຸບພິກຂຸຍ້ອນໄດ້ກິ່ນຊີ້ນໝີ

ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນຊີ້ນໝີ ອົງໃດສັນ ຕ້ອງອາບັດທຸກກົດ"

## ເລື້ອງຊົງຫ້າມສັນຊີ້ນເສືອດາວ

ສະໄໝນັ້ນ ພວກນາຍພານຂ້າເສືອດາວແລ້ວກິນ ໄດ້ຖວາຍແກ່ພິກຂຸທັງຫຼາຍຜູ້ທ່ຽວ ບິນທະ ບາດ ພິກຂຸທັງຫຼາຍສັນຊີ້ນເສືອດາວແລ້ວຢູ່ໃນປ່າ ເສືອດາວໄລ່ຕະຄຸບພິກຂຸຍ້ອນ ໄດ້ກິ່ນຊີ້ນເສືອດາວ

ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນຊີ້ນເສືອດາວ ອົງໃດສັນ ຕ້ອງອາບັດທຸກກົດ"

ສຸບປິຍະພານະວາຣະທີ ໘ ຈົບ

## ໑໗໐. ຍາຄຸມະທຸໂຄລະການຸຊານະນາ

## ວ່າດ້ວຍຊົງອະນຸຍາດເຂົ້າຕົ້ມແລະເຂົ້າໜົມຫວານ

## ເລື້ອງພາມຖ້າໂອກາດຖວາຍພັດຕາຫານ

[໔໗໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນພາຣານະສີຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງອັນທະກະວິນທະຊົນນະບົດ ພ້ອມພິກຂຸສົງໝູ່ໃຫຍ່ຈຳນວນ ໑,໔໕໐ ອົງ ສະໄໝນັ້ນ ຊາວຊົນນະບົດບັນທຸກເກືອ ນ້ຳມັນ ເຂົ້າສານ ຂອງຫຍ້ຳຫຼວງຫຼາຍມາໃນກວຽນ ຍ່າງນຳພິກຂຸສົງທີ່ມີພຣະພຸດທະເຈົ້າຊົງເປັນປະທານ ດ້ວຍຕັ້ງໃຈວ່າ "ເມື່ອໄດ້ໂອກາດ

ພວກເຮົາ ຈະເຮັດພັດຕາຫານຖວາຍ" ມີຄົນກິນເງື່ອນອີກ ໕໐໐ ຄົນຕິດຕາມໄປດ້ວຍ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປຕາມລຳດັບ ຈົນເຖິງອັນທະວິນທະຊົນນະບົດ

ຄັ້ງນັ້ນ ພາມຄົນໜຶ່ງເມື່ອບໍ່ໄດ້ໂອກາດ ໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຍ່າງນຳ ພິກຂຸສົງທີ່ມີພຣະພຣະພຸດທະເຈົ້າເປັນປະທານກວ່າ ໔ ເດືອນແລ້ວ ດ້ວຍຕັ້ງໃຈວ່າ ຈະເຮັດພັດຕາຫານຖວາຍເມື່ອໄດ້ໂອກາດ ແຕ່ກໍຫາໂອກາດບໍ່ໄດ້ ເຮົາໂຕຄົນດຽວແລະຍັງເສຍປະໂຫຍດທາງຄະຣາວາດໄປຫຼາຍ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງກວດເບິ່ງໂຮງອາຫານ ສິ່ງໃດຍັງບໍ່ມີໃນໂຮງອາຫານ ຈັດກຽມສິ່ງນັ້ນຖວາຍ" ແລ້ວກວດເບິ່ງໂຮງອາຫານ ບໍ່ເຫັນຂອງ ໔ ຢ່າງ ຄື ເຂົ້າຕົ້ມແລະເຂົ້າໜົມຫວານ ຈຶ່ງເຂົ້າໄປຫາທ່ານພຣະອານົນແລ້ວ ໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນຂໍໂອກາດເທີ້ນ ຂ້ານ້ອຍເມື່ອບໍ່ໄດ້ໂອກາດຈຶ່ງໄດ້ມີຄວາມຄິດດັ່ງນີ້ວ່າ ເຮົາຍ່າງນຳພິກຂຸສົງທີ່ມີພຣະພຸດທະເຈົ້າເປັນປະທານກວ່າ ໔ ເດືອນແລ້ວ ດ້ວຍຕັ້ງໃຈວ່າ ຈະເຮັດພັດຕາຫານຖວາຍເມື່ອໄດ້ໂອກາດ ແຕ່ກໍຫາໂອກາດບໍ່ໄດ້ ເຮົາໂຕຄົນດຽວແລະຍັງເສຍປະໂຫຍດທາງຄະຣາວາດໄປຫຼາຍ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງກວດເບິ່ງໂຮງອາຫານ ສິ່ງໃດຍັງບໍ່ມີໃນໂຮງອາຫານ ຈັດກຽມສິ່ງນັ້ນຖວາຍ ທ່ານອານົນ ຂ້ານ້ອຍນັ້ນກວດເບິ່ງໂຮງອາຫານ ບໍ່ເຫັນຂອງ ໔ ຢ່າງ ຄື ເຂົ້າຕົ້ມແລະເຂົ້າໜົມຫວານ ທ່ານອານົນ ຖ້າຂ້ານ້ອຍຈັດກຽມເຂົ້າຕົ້ມແລະເຂົ້າໜົມຫວານ ພຣະໂຄດົມຜູ້ຈະເລີນຈະຊົງຮັບບໍ"

ທ່ານພຣະອານົນຕອບວ່າ "ພາມ ຖ້າເປັນແນວນັ້ນ ອາດຕະມາຈະຂາບທູນຖາມພຣະຜູ້ມີພຣະພາກເຈົ້າ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມຈົ່ງຈັດກຽມຖວາຍເທີ້ນ"

ທ່ານພຣະອານົນບອກພາມວ່າ "ທ່ານຈັດກຽມໄດ້"

ເມື່ອຜ່ານຣາຕີນັ້ນໄປ ພາມຈັດກຽມເຂົ້າຕົ້ມແລະເຂົ້າໜົມຫວານເປັນຈຳນວນຫຼາຍແລ້ວນ້ອມເຂົ້າໄປຖວາຍພຣະຜູ້ມີພຣະພາກເຈົ້າວ່າ "ຂໍພຣະໂຄດົມຜູ້ຈະເລີນ ໂຜດຮັບເຂົ້າຕົ້ມແລະເຂົ້າໜົມຫວານຂອງຂ້າພຣະອົງເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພາມ ຖ້າເປັນແນວນັ້ນ ທ່ານຈົ່ງຖວາຍແກ່ພິກຂຸທັງຫຼາຍ" ພິກຂຸທັງຫຼາຍຢຳເກງຢູ່ ຈຶ່ງບໍ່ຍອມຮັບປະເຄນ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພວກທ່ານຈົ່ງຮັບປະເຄນສັນເທີ້ນ"

ຄັ້ງນັ້ນ ພາມໄດ້ນຳເຂົ້າຕົ້ມແລະເຂົ້າໜົມຫວານຈຳນວນຫຼາຍມາປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດ ຊົງຫ້າມພັດແລ້ວ ລ້າງພຣະຫັດແລ້ວລະພຣະຫັດຈາກບາດ ຈຶ່ງໄດ້ນັ່ງເຝົ້າຢູ່ທີ່ສົມຄວນ

## ປະໂຫຍດຂອງເຂົ້າຕົ້ມມີ ໑໐ ຢ່າງ

ພຣະຜູ້ມີພຣະພາກເຈົ້າຕັດກັບພາມຜູ້ນັ່ງທີ່ສົມຄວນວ່າ "ພາມ ເຂົ້າຕົ້ມມີອານິສົງ ໑໐ ປະການ ຄື ຜູ້ຖວາຍເຂົ້າຕົ້ມຊື່ວ່າ (໑) ໃຫ້ອາຍຸ (໒) ໃຫ້ວັນນະ (໓) ໃຫ້ສຸຂະ (໔) ໃຫ້ພະລະ (໕) ໃຫ້ປະຕິພານ (໖) ບັນເທົາຄວາມຫິວ (໗) ລະງັບຄວາມຢາກ (໘) ໃຫ້ລົມແລ່ນດີ (໙) ຊໍາຮະລໍາໄສ້ (໑໐) ເຜົາອາຫານທີ່ຍັງບໍ່ຍ່ອຍໃຫ້ຍ່ອຍ ພາມເຂົ້າຕົ້ມມີອານິສົງ ໑໐ ປະການນີ້ແລ

ເມື່ອຕັດໄວຍາກອນພາສິດນີ້ແລ້ວ ພຣະສຸຄົດເຈົ້າຕັດອະນຸໂມທະນາຕໍ່ໄປວ່າ

ທາຍົກຜູ້ຕັ້ງໃຈຖວາຍເຂົ້າຕົ້ມແກ່ປະຕິຄາຫົກຜູ້ສັງລວມແລ້ວ
ຜູ້ສັນອາຫານທີ່ຜູ້ອື່ນຖວາຍຕາມການສົມຄວນ
ເຂົາໄດ້ຊື່ວ່າຕາມເພີ່ມໃຫ້ປະໂຫຍດ ໑໐ ປະການແກ່ປະຕິຄາຫົກ
ຄື ອາຍຸ ວັນນະ ສຸຂະ ພະລະ ປະຕິພານ
ນອກຈາກນັ້ນ ເຂົ້າຕົ້ມຍ່ອມບັນເທົາຄວາມຫິວ ຄວາມຢາກ
ໃຫ້ລົມແລ່ນດີ ຊໍາຮະລໍາໄສ້ ແລະຊ່ອຍຍ່ອຍອາຫານ
ພຣະສຸຄົດເຈົ້າຕັດວ່າເຂົ້າຕົ້ມເປັນຢາ
ດັ່ງນັ້ນ ຜູ້ທີ່ຕ້ອງການຄວາມສຸກອັນເປັນຂອງມະນຸດຕະຫຼອດການລະນານ
ແລະປາຖະໜາຄວາມສຸກອັນເປັນທິບ ຫຼື ປາຖະໜາຄວາມງາມ
ອັນເປັນຂອງມະນຸດ ຈຶ່ງຄວນຖວາຍເຂົ້າຕົ້ມ"

ເມື່ອຊົງອະນຸໂມທະນາແກ່ພາມດ້ວຍພຣະຄາຖາເຫຼົ່ານີ້ແລ້ວ ຈຶ່ງສະເດັດລຸກຈາກທີ່ປະທັບກັບໄປ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຊົງສະແດງທໍາມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຂົ້າຕົ້ມແລະເຂົ້າໜົມຫວານ"

## ໑໗໑. ຕະຣຸນັບປະສັນນະມະຫາມັດຕະວັດຖຸ

### ວ່າດ້ວຍມະຫາອໍາໝາດຜູ້ເຫຼື້ອມໃສໃໝ່

[໒໘໓] ຄົນທັງຫຼາຍຮູ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດເຂົ້າຕົ້ມແລະເຂົ້າໜົມຫວານ ແກ່ພິກຂຸ ຈຶ່ງຈັດກຽມເຂົ້າຕົ້ມຊຸ້ນ[1]ແລະເຂົ້າໜົມຫວານຖວາຍແຕ່ເຊົ້າ ພວກພິກຂຸທີ່ຮັບປະເຄນເຂົ້າຕົ້ມຊຸ້ນແລະເຂົ້າໜົມຫວານແຕ່ເຊົ້າ ສັນພັດຕາຫານໃນໂຮງອາຫານບໍ່ໄດ້ຕາມຕ້ອງການ

ສະໄໝນັ້ນ ມະຫາອໍາໝາດຄົນໜຶ່ງຜູ້ເຫຼື້ອມໃສໃໝ່ໄດ້ນິມົນພິກຂຸສົງມີພຣະພຸດທະເຈົ້າເປັນປະທານເພື່ອຈະເລີນກຸສົນໃນມື້ອື່ນເຊົ້າ ມະຫາອໍາໝາດຜູ້ເຫຼື້ອມໃສໃໝ່ນັ້ນໄດ້ມີຄວາມຄິດ

ດັ່ງນີ້ວ່າ "ຖ້າຈັ່ງໃດ ເຮົາເພິ່ງຕົກແຕ່ງຊຸດຊື່ນ ໑,໔໕໐ ຊຸດ ເພື່ອພິກຂຸ ໑,໔໕໐ ອົງ ນ້ອມເຂົ້າໄປຖວາຍພິກຂຸອົງລະ ໑ ຊຸດ" ໂດຍລ່ວງໄປແຫ່ງຣາຕີນັ້ນ ເຂົາສັ່ງໃຫ້ຈັດກຽມຂອງສັນຢ່າງດີ ແລະຊຸດຊື່ນ ໑,໔໕໐ ຊຸດ ແລ້ວໃຫ້ເຈົ້າໜ້າທີ່ໄປຂາບທູນພັດຕະການພຣະຜູ້ມີພຣະພາກເຈົ້າວ່າ "ເຖິງເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນສະເດັດໄປນິເວດຂອງມະຫາອຳໝາດຜູ້ເຫຼື້ອມໃສໃໝ່ນັ້ນ ປະທັບນັ່ງເທິງອາສະນະທີ່ເຂົາຈັດຖວາຍ ພ້ອມດ້ວຍພິກຂຸສົງ ເຂົາໄດ້ປະເຄນພິກຂຸໃນໂຮງອາຫານ

ພວກພິກຂຸກ່າວແນວນີ້ວ່າ "ມະຫາອຳໝາດ ທ່ານຈົ່ງຖວາຍແຕ່ໜ້ອຍ ໆ ເທີ້ນ"

ມະຫາອຳໝາດກ່າວວ່າ "ທ່ານຜູ້ຈະເລີນ ທ່ານຢ່າຮັບພຽງໜ້ອຍ ໆ ຍ້ອນຄິດວ່າ ນີ້ເປັນມະຫາອຳໝາດຜູ້ເຫຼື້ອມໃສໃໝ່ ຂ້ານ້ອຍຈັດກຽມຂອງສັນໄວ້ເປັນຈຳນວນຫຼາຍພ້ອມດ້ວຍຊຸດຊື່ນ ໑,໔໕໐ ຊຸດ ຈະນ້ອມເຂົ້າໄປຖວາຍພິກຂຸອົລລະ ໑ ຊຸດ ທ່ານໂຜດຮັບໃຫ້ພໍຕາມຄວາມຕ້ອງການເທີ້ນ"

ພວກພິກຂຸກ່າວວ່າ "ມະຫາອຳໝາດ ພວກອາດຕະມາຮັບແຕ່ໜ້ອຍບໍ່ແມ່ນຍ້ອນສາເຫດນັ້ນ ແຕ່ພວກອາດຕະມາຮັບປະເຄນເຂົ້າຕົ້ມຊຸ້ນ ແລະ ເຂົ້າໜົມຫວານມາແຕ່ເຊົ້າແລ້ວ ດັ່ງນັ້ນຈຶ່ງຕ້ອງຮັບແຕ່ໜ້ອຍ ໆ"

ຄັ້ງນັ້ນ ມະຫາອຳໝາດຜູ້ເຫຼື້ອມໃສໃໝ່ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທີ່ຂ້າພະເຈົ້ານິມົນໄວ້ຈຶ່ງສັນເຂົ້າຕົ້ມຊຸ້ນຂອງຜູ້ອື່ນນໍ ຂ້ານ້ອຍບໍ່ສາມາດຈະຖວາຍໃຫ້ພໍແກ່ຄວາມຕ້ອງການບໍ" ໂກດເສຍໃຈຖ້າຈັບຜິດ ໄດ້ບັນຈຸບາດຂອງພິກຂຸຈົນເຕັມພ້ອມກ່າວວ່າ "ພວກທ່ານຈະສຫນກໍໄດ້ ຈະຂົນເອົາໄປກໍໄດ້" ແລ້ວໄດ້ນຳຂອງຫຍ້ຳຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຊົງຫ້າມພັດຕາຫານແລ້ວ ລະພຣະຫັດຈາກບາດ ຈຶ່ງໄດ້ນັ່ງເຝົ້າທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ມະຫາອຳໝາດຜູ້ເຫຼື້ອມໃສໃໝ່ນັ້ນເຫັນແຈ້ງ ຊວນໃຫ້ຢາກ ຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຊົງລຸກຈາກອາສະນະສະເດັດກັບ

ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດກັບບໍ່ດົນ ມະຫາອຳໝາດຜູ້ເຫຼື້ອມໃສໃໝ່ນັ້ນໄດ້ມີຄວາມກັງວົນ ໄດ້ມີຄວາມຮ້ອນໃຈວ່າ "ບໍ່ແມ່ນລາບຂອງເຮົານໍ ເຮົາບໍ່ມີລາບນໍ ເຮົາໄດ້ຊົ່ວແລ້ວນໍເຮົາໄດ້ບໍ່ດີແລ້ວນໍ ທີ່ໄປໂກດເສຍໃຈຖ້າຈັບຜິດແລ້ວບັນຈຸບາດຂອງພິກຂຸຈົນເຕັມພ້ອມ ກ່າວວ່າພວກທ່ານຈະສຫນກໍໄດ້ ຈະຂົນເອົາໄປກໍໄດ້ ເຮົາສ້າງສົມບຸນຫຼືບາບຫຼາຍກວ່າກັນນໍ" ຈຶ່ງເຂົ້າໄປ

ເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນແລ້ວໄດ້ ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂໍພຣະຣາດຊະທານອະໂຣກາດ ເມື່ອພຣະຜູ້ມີພຣະພາກເຈົ້າສະເດັດກັບບໍ່ດົນ ຂ້າພຣະອົງໄດ້ມີຄວາມກັງວົນ ໄດ້ມີຄວາມຮ້ອນໃຈວ່າ ບໍ່ແມ່ນລາບຂອງເຮົານໍ ເຮົາບໍ່ມີລາບນໍ ເຮົາໄດ້ຊົ່ວແລ້ວນໍເຮົາໄດ້ບໍ່ດີແລ້ວນໍ ທີ່ໄປໂກດເສຍໃຈຖ້າຈັບຜິດແລ້ວບັນຈຸບາດຂອງພິກຂຸຈົນເຕັມພ້ອມກ່າວວ່າພວກທ່ານຈະສັນກໍໄດ້ ຈະຂົນເອົາໄປກໍໄດ້ ເຮົາສ້າງສົມບຸນ ຫຼືບາບຫຼາຍກວ່າກັນນໍ ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງສ້າງສົມບຸນຫຼືບາບຫຼາຍ ກວ່າກັນ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ມະຫາອຳໝາດ ທ່ານນິມົນພິກຂຸສົງມີພຣະພຸດທະເຈົ້າ ເປັນປະທານດ້ວຍການໃຫ້ທີ່ລ້ຳເລີດໃດ ທ່ານຊື່ວ່າສ້າງສົມບຸນໄວ້ຫຼາຍຍ້ອນການໃຫ້ທີ່ເລີດນັ້ນ ພິກຂຸແຕ່ລະອົງຜູ້ຮັບເມັດເຂົ້າສຸກແຕ່ລະເມັດຂອງທ່ານລ້ວນເລີດດ້ວຍຄຸນສົມບັດໃດ ທ່ານຈຶ່ງເປັນຜູ້ທີ່ຊື່ວ່າສ້າງສົມບຸນໄວ້ຫຼາຍຍ້ອນພິກຂຸຜູ້ເລີດດ້ວຍຄຸນສົມບັດນັ້ນ ສະຫວັນເປັນຫົນທາງທີ່ທ່ານເລີ່ມຕົ້ນໄວ້ແລ້ວ"

ຄັ້ງນັ້ນ ມະຫາອຳໝາດຜູ້ເຫຼື້ອມໃສໃໝ່ນັ້ນ ແຈ່ມໃສເບີກບານໃຈວ່າ "ຮູ້ວ່າເປັນລາບຂອງເຮົາ ຮູ້ວ່າເຮົາໄດ້ດີແລ້ວ ຮູ້ວ່າສະຫວັນເປັນຫົນທາງທີ່ເຮົາເລີ່ມຕົ້ນໄວ້ແລ້ວ" ແລ້ວ ລຸກຈາກບ່ອນນັ່ງຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວກັບໄປ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງໃຫ້ປະຊຸມສົງຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຊົງສອບຖາມພວກພິກຂຸວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸໄດ້ຮັບນິມົນໄວ້ທີ່ໜຶ່ງແລ້ວໄປສັນເຂົ້າຕົ້ມຂຸ້ນອີກທີ່ໜຶ່ງ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ພິກຂຸທັງຫຼາຍ ເປັນຫຍັງໂມຄະບຸຣຸດເຫຼົ່ານັ້ນໄດ້ຮັບນິມົນໄວ້ທີ່ໜຶ່ງແລ້ວໄປສັນເຂົ້າຕົ້ມຂຸ້ນອີກທີ່ໜຶ່ງນໍ ພິກຂຸທັງຫຼາຍ ການກະທຳແນວນີ້ບໍ່ໄດ້ເຮັດໃຫ້ຄົນທີ່ບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສຂຶ້ນ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຮັບນິມົນໄວ້ທີ່ໜຶ່ງແລ້ວ ບໍ່ເພິ່ງໄປສັນອີກທີ່ໜຶ່ງ ອົງໃດເພິ່ງສັນ ເພິ່ງຖືກປັບອາບັດຕາມທຳ"[๑]

## ໑໗໔. ເພລັດຖະກັດຈານະວັດຖຸ

### ວ່າດ້ວຍພາມເພລັດຖະກັດຈານະຖວາຍນ້ຳອ້ອຍປ່ຽງ

[໔໗໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ອັນທະກະວິນທະຊົນນະບົດຕາມພຣະອັ

ດທະຍາໄສ ແລ້ວສະເດັດຈາຣິກໄປທາງນະຄອນຣາດຊະຄື ພ້ອມດ້ວຍພິກຂຸຈຳນວນ ໑,໒໕໐ ອົງ ສະໄໝນັ້ນ ພາມເພລັດຖະກັດຈານະເດີນທາງໄກຈາກນະຄອນຣາດຊະຄືໄປສູ່ອັນທະກະວິນ ທະຊົນນະບົດ ພ້ອມດ້ວຍກວຽນ ໕໐໐ ເຫຼັ້ມ ລ້ວນບັນທຸກນ້ຳອ້ອຍປ່ຽງເຕັມ ພຣະຜູ້ມີພຣະພາກ ເຈົ້າທອດພຣະເນດເຫັນເຂົາຍ່າງມາແຕ່ໄກ ຈຶ່ງສະເດັດແວ່ຂ້າງທາງປະທັບນັ່ງຂ່ວງໄມ້ຕົ້ນໜຶ່ງ

ລຳດັບນັ້ນ ພາມເພລັດຖະກັດຈານະເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວໄດ້ຢືນຢູ່ ທີ່ສົມຄວນ ພາມເພລັດຖະກັດຈານະຜູ້ຢືນຢູ່ທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າພຣະອົງ ປາຖະໜາຈະຖວາຍນ້ຳອ້ອຍປ່ຽງແກ່ພິກຂຸອົງລະ ໑ ໝໍ້ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ກັດຈານະ ຖ້າເປັນແນວນັ້ນ ທ່ານຈົ່ງນຳນ້ຳອ້ອຍປ່ຽງມາໝໍ້ດຽວທໍ່ນັ້ນ”

ພາມເພລັດຖະກັດຈານະ ຂາບທູນຮັບສະໜອງພຣະພຸດທະດຳຣັດແລ້ວ ນຳໝໍ້ນ້ຳອ້ອຍປ່ຽງມາພຽງໝໍ້ດຽວ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າພຣະອົງນຳໝໍ້ນ້ຳອ້ອຍປ່ຽງມາແລ້ວ ຂ້ານ້ອຍ ຂ້າພຣະອົງຈະປະຕິບັດແນວໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ກັດຈານະ ຖ້າເປັນແນວນັ້ນ ທ່ານຈົ່ງຖວາຍນ້ຳອ້ອຍປ່ຽງແກ່ພິກຂຸທັງຫຼາຍເທີ້ນ”

ພາມເພລັດຖະກັດຈານະຂາບທູນຮັບສະໜອງພຣະພຸດທະດຳຣັດແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າພຣະອົງຖວາຍນ້ຳອ້ອຍປ່ຽງແກ່ພິກຂຸທັງຫຼາຍແລ້ວ ຂ້ານ້ອຍ ແລະນ້ຳອ້ອຍປ່ຽງເຫຼືອເປັນຈຳນວນຫຼາຍ ຂ້າພຣະອົງຈະປະຕິບັດແນວໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ທ່ານຈົ່ງຖວາຍນ້ຳອ້ອຍປ່ຽງແກ່ພິກຂຸທັງຫຼາຍ ຕາມຄວາມຕ້ອງການເທີ້ນ”

ພາມຂາບທູນຮັບສະໜອງພຣະພຸດທະດຳຣັດແລ້ວ ໄດ້ຖວາຍນ້ຳອ້ອຍປ່ຽງແກ່ພິກຂຸທັງຫຼາຍຕາມຕ້ອງການແລ້ວໄດ້ຂາບທູນວ່າ “ຂ້າພຣະອົງຖວາຍນ້ຳອ້ອຍປ່ຽງແກ່ພິກຂຸທັງຫຼາຍຕາມຕ້ອງການ ແຕ່ນ້ຳອ້ອຍປ່ຽງຍັງເຫຼືອຢູ່ຫຼາຍ ຈະປະຕິບັດແນວໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ທ່ານຈົ່ງນຳນ້ຳອ້ອຍປ່ຽງປະເຄນພິກຂຸທັງຫຼາຍໃຫ້ສັນຈົນອີ່ມ ໜຳເທີ້ນ”

ພາມຂາບທູນຮັບສະໜອງພຣະພຸດທະດຳຣັດແລ້ວ ໄດ້ນຳນ້ຳອ້ອຍປ່ຽງປະເຄນພິກຂຸທັງຫຼາຍໃຫ້ສັນຈິນອີ່ມໜຳ ພິກຂຸລາງພວກບັນຈຸນ້ຳອ້ອຍປ່ຽງເຕັມບາດແດ່ ເຕັມໝໍ້ຕອງນ້ຳແດ່ ເຕັມຖົງຍ່າມແດ່ ພາມເພລັດຖະກັດຈານະນຳນ້ຳອ້ອຍປ່ຽງປະເຄນພິກຂຸທັງຫຼາຍໃຫ້ສັນຈິນອີ່ມແລ້ວຂາບທູນວ່າ “ຂ້າພຣະອົງໄດ້ນຳນ້ຳອ້ອຍປ່ຽງປະເຄນພິກຂຸທັງຫຼາຍ ໃຫ້ສັນຈິນອີ່ມໜຳແລ້ວ ແຕ່ນ້ຳອ້ອຍປ່ຽງຍັງເຫຼືອຢູ່ຫຼາຍ ຈະປະຕິບັດແນວໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ທ່ານຈົ່ງໃຫ້ນ້ຳອ້ອຍປ່ຽງແກ່ພວກຄົນກິນເງື່ອນເທີ້ນ”

ພາມເພລັດຖະກັດຈານະຂາບທູນຮັບສະໜອງພຣະພຸດທະດຳຣັດແລ້ວ ໄດ້ໃຫ້ນ້ຳອ້ອຍປ່ຽງແກ່ພວກຄົນກິນເງື່ອນແລ້ວຂາບທູນວ່າ “ຂ້າພຣະອົງໄດ້ໃຫ້ນ້ຳອ້ອຍປ່ຽງແກ່ພວກຄົນກິນເງື່ອນແລ້ວ ແຕ່ນ້ຳອ້ອຍປ່ຽງຍັງເຫຼືອຢູ່ຫຼາຍ ຈະປະຕິບັດແນວໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ທ່ານຈົ່ງໃຫ້ນ້ຳອ້ອຍປ່ຽງແກ່ພວກຄົນກິນເງື່ອນຈົນພໍແກ່ຄວາມຕ້ອງການເທີ້ນ”

ພາມເພລັດຖະກັດຈານະຂາບທູນຮັບສະໜອງພຣະພຸດທະດຳຣັດແລ້ວ ໄດ້ໃຫ້ນ້ຳອ້ອຍປ່ຽງແກ່ພວກຄົນກິນເງື່ອນແລ້ວຂາບທູນວ່າ “ຂ້າພຣະອົງໄດ້ໃຫ້ນ້ຳອ້ອຍປ່ຽງແກ່ພວກຄົນກິນເງື່ອນ ຈົນພໍແກ່ຄວາມຕ້ອງການແລ້ວ ແຕ່ນ້ຳອ້ອຍປ່ຽງຍັງເຫຼືອຢູ່ຫຼາຍ ຈະປະຕິບັດແນວໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ທ່ານຈົ່ງນຳນ້ຳອ້ອຍປ່ຽງມາໃຫ້ພວກຄົນກິນເງື່ອນກິນຈົນອີ່ມໜຳເທີ້ນ”

ພາມເພລັດຖະກັດຈານະຂາບທູນຮັບສະໜອງພຣະພຸດທະດຳຣັດແລ້ວ ໄດ້ນຳນ້ຳອ້ອຍປ່ຽງໃຫ້ພວກຄົນກິນເງື່ອນກິນຈົນອີ່ມໜຳແລ້ວຄົນກິນເງື່ອນລາງພວກບັນຈຸນ້ຳອ້ອຍປ່ຽງເຕັມກະປ໋ອງແດ່ ເຕັມໝໍ້ແດ່ ຫໍ່ເຕັມຜ້າຂາວປູລາດແດ່ ເຕັມພົກແດ່

ພາມເພລັດຖະກັດຈານະນຳນ້ຳອ້ອຍປ່ຽງລ້ຽງດູພວກຄົນກິນເງື່ອນໃຫ້ອີ່ມໜຳແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າວ່າ “ຂ້າພຣະອົງໄດ້ນຳນ້ຳອ້ອຍປ່ຽງລ້ຽງດູພວກຄົນກິນເງື່ອນຈົນອີ່ມໜຳ ແຕ່ນ້ຳອ້ອຍປ່ຽງຍັງເຫຼືອຢູ່ຫຼາຍ ຈະປະຕິບັດແນວໃດ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ດູຣາກັດຈານະ ທົ່ວໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກທົ່ວທຸກໝູ່ສັດ ພ້ອມທັງສະມະນະພາມເທວະດາແລະມະນຸດ ເຮົາບໍ່ເລັງເຫັນ ຜູ້ທີ່ບໍຣິໂພກນ້ຳອ້ອຍປ່ຽງນັ້ນແລ້ວຈະຍ່ອຍໄດ້ດີ ຍົກເວັ້ນຕະຖາຄົດຫຼືສາວົກຂອງຕະຖາຄົດ ທ່ານຈົ່ງ ຖິ້ມນ້ຳອ້ອຍປ່ຽງນັ້ນໃນບ່ອນປາສະຈາກຂອງຂຽວຫຼືໃນບ່ອນທີ່ບໍ່ມີໂຕສັດ”

ພາມເພລັດຖະກັດຈານະຂາບທູນຮັບສະໜອງພຣະພຸດທະດຳຣັດແລ້ວ ໄດ້ຖອກນ້ຳອ້ອຍປ່ຽງ ລົງໃນບ່ອນບໍ່ມີໄຕສັດ ນ້ຳອ້ອຍປ່ຽງນັ້ນໄດ້ຟົດພຸ່ງສົ່ງສຽງດັງ ສີ່ ສີ່ ສີ່ ສີ່ ພົ່ນອາຍພົ່ນຄວັນຂຶ້ນ ຄືຜານທີ່ຮ້ອນເມັດມື້ທີ່ບຸກຄົນຈຸ່ມລົງນ້ຳຍ່ອມຟົດພຸ່ງສົ່ງສຽງດັງ ສີ່ ສີ່ ສີ່ ສີ່ ທັນໃດນັ້ນເຂົາສະຫຼົດໃຈເກີດໂລມະຊາດຊູຊັນ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງ ແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງເຝົ້າຢູ່ທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດອະນຸປຸບພີກະຖາ ຄື ຊົງປະກາດ

໑. ທານະກະຖາ

໒. ສີລະກະຖາ

໓. ສັກຄະກະຖາ

໔. ກາມາທີນະວະກະຖາ

໕. ເນກຂຳມານິສັງສະກະຖາ ແກ່ພາມເພລັດຖະນັ້ນຜູ້ນັ່ງຢູ່ທີ່ສົມຄວນ

ເມື່ອຊົງຊາບວ່າພາມເພລັດຖະນັ້ນມີຈິດຄວນ ອ່ອນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດແກ່ພາມເພລັດຖະກັດຈານະ ທີ່ອາສະນະນັ້ນແລວ່າ “ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ” ປຽບຄືຜ້າຂາວສະອາດປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ຄັ້ງນັ້ນ ພາມເພລັດຖະກັດຈານະໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອໃຜອີກໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ “ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບ ພຣະອົງຜູ້ຈະເລີນ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ”

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປຕາມລຳດັບ ຈົນເຖິງນະຄອນຣາດຊະຄຶໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເວລຸວັນ ສະຖານທີ່ໃຫ້ເຫຍື່ອກະແຕໃນນະຄອນຣາດຊະຄຶນັ້ນ

ສະໄໝນັ້ນ ນະຄອນຣາດຊະຄຶມີນ້ຳອ້ອຍປ່ຽງຫຼາຍ ພິກຂຸທັງຫຼາຍຢຳເກງຢູ່ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດນ້ຳອ້ອຍປ່ຽງແກ່ພິກຂຸຜູ້ເປັນໄຂ້ທີ່ນັ້ນ ບໍ່ຊົງອະນຸຍາດແກ່ຜູ້ບໍ່ເປັນໄຂ້" ຈຶ່ງບໍ່ສັນນ້ຳອ້ອຍປ່ຽງ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳອ້ອຍປ່ຽງແກ່ພິກຂຸຜູ້ເປັນໄຂ້ ນ້ຳອ້ອຍປ່ຽງລະລາຍນ້ຳແກ່ຜູ້ບໍ່ເປັນໄຂ້"

## ໑໗໖. ປາຕະລິຄາມະວັດຖຸ

### ວ່າດ້ວຍຊາວປາຕະລິຄາມຖວາຍທີ່ພັກ

### ເລື້ອງຊົງຮັບອາຄານພັກແຮມ

[໔໗໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນຣາດຊະຄຶຕາມພຣະອັດທະຍາໄສແລ້ວ ສະເດັດໄປທາງປາຕະລິຄາມພ້ອມດ້ວຍພິກຂຸຈຳນວນ ໑,໔໕໐ ອົງ ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປຕາມລຳດັບ ຈົນເຖິງປາຕະລິຄາມ

ອຸປາສົກອຸປາສິກາຊາວປາຕະລິຄາມໄດ້ຮູ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງປາຕະລິຄາມແລ້ວ" ຈຶ່ງພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງຢູ່ທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ອຸປາສົກອຸປາສິກາຊາວປາຕະລິຄາມເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ຄັ້ງນັ້ນ ອຸປາສົກອຸປາສິກາຊາວປາຕະລິຄາມຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໂຜດຮັບອາຄານທີ່ພັກຂອງພວກຂ້າພຣະອົງເທີ້ນ ຂ້ານ້ອຍ" ພຣະຜູ້ມີພຣະພາກເຈົ້າຊົງຮັບໂດຍດຸດສະນີພາບ

ຄັ້ງນັ້ນ ອຸປາສົກອຸປາສິກາຊາວປາຕະລິຄາມຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບແລ້ວຈຶ່ງລຸກຈາກອາສະນະ ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວພາກັນຍ່າງໄປ

ທີ່ອາຄານທີ່ພັກ ປູລາດອາສະນະທົ່ວອາຄານ ຈັດອາສະນະ ຕັ້ງໝໍ້ນໍ້າ ເຍືອງໄຟນໍ້າມັນແລ້ວ ພາກັນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວຢືນຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພວກຂ້າພຣະອົງປູລາດອາສະນະ ກັ້ງເພດານທົ່ວອາຄານທີ່ພັກ ຈັດອາສະນະ ຕັ້ງໝໍ້ນໍ້າ ເຍືອງໄຟນໍ້າມັນໄວ້ແລ້ວ ຂໍພຣະອົງຊົງຊາບເວລາອັນເໝາະສົມໃນບັດນີ້ເທີ້ນ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກແລ້ວ ຊົງຖືບາດແລະຈີວອນສະເດັດໄປທີ່ອາຄານພັກແຮມພ້ອມກັບພິກຂຸສົງ ຊົງຊຳຣະພຣະບາດແລ້ວສະເດັດເຂົ້າອາຄານທີ່ພັກ ປະທັບນັ່ງອີງເສົາກາງ ອວ່າຍໜ້າໄປທາງທິດຕາເວັນອອກ ແມ່ນພິກຂຸສົງກໍລ້າງຕີນແລ້ວເຂົ້າອາຄານທີ່ພັກ ນັ່ງອີງຝາດ້ານຕາເວັນຕົກ ອວ່າຍໜ້າໄປທາງທິດຕາເວັນອອກຫ້ອມລ້ອມພຣະຜູ້ມີພຣະພາກເຈົ້າ ແມ່ນອຸປາສົກອຸປາສິກາຊາວປາຕະລິຄາມກໍລ້າງຕີນແລ້ວເຂົ້າໄປອາຄານທີ່ພັກນັ່ງອີງຝາດ້ານທິດຕາເວັນອອກອວ່າຍໜ້າໄປທາງທິດຕາເວັນຕົກຫ້ອມລ້ອມພຣະຜູ້ມີພຣະພາກເຈົ້າ

## ໂທດແຫ່ງສີນວິບັດ ໕ ປະການ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດກັບອຸປາສົກອຸປາສິກາຊາວປາຕະລິຄາມວ່າ "ຄະຫະບໍດີ ທັງຫຼາຍ ສີນວິບັດຂອງບຸກຄົນຜູ້ທຸສີນ ມີໂທດ ໕ ປະການນີ້ ໂທດ ໕ ປະການ ຄື

໑. ຄະຫະບໍດີທັງຫຼາຍ ບຸກຄົນຜູ້ທຸສີນ ມີສີນວິບັດໃນໂລກນີ້ ຍ່ອມເຖິງຄວາມເສື່ອມໂພຄະຊັບໃຫຍ່ຫຼວງ ເຊິ່ງມີຄວາມຜະໝາດເປັນເຫດ ນີ້ເປັນໂທດປະການທີ ໑ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ
໒. ຄະຫະບໍດີທັງຫຼາຍ ກິດຕິສັບອັນຊົ່ວຂອງບຸກຄົນຜູ້ທຸສີນ ມີສີນວິບັດ ຍ່ອມກະຈາຍໄປ ນີ້ເປັນໂທດປະການທີ ໒ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ
໓. ຄະຫະບໍດີທັງຫຼາຍ ບຸກຄົນຜູ້ທຸສີນ ມີສີນວິບັດ ຈະເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຍ່ອມບໍ່ແກ່ກ້າເກີ້ເຂີນເຂົ້າໄປ ນີ້ເປັນໂທດປະການທີ ໓ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ
໔. ຄະຫະບໍດີທັງຫຼາຍ ບຸກຄົນຜູ້ທຸສີນ ມີສີນວິບັດ ຍ່ອມຫຼົງລືມສະຕິຕາຍ ນີ້ເປັນໂທດປະການທີ ໔ ແຫ່ງສີນວິບັດຂອງຄົນທຸສີນ
໕. ຄະຫະບໍດີທັງຫຼາຍ ບຸກຄົນຜູ້ທຸສີນ ມີສີນວິບັດ ຫຼັງຈາກຕາຍແລ້ວ ຍ່ອມໄປເກີດໃນອະບາຍ ທຸກຄະຕິ ວິນິບາດ ນະຮົກ ນີ້ເປັນໂທດຂໍ້ທີ ໕ ແຫ່ງສີນວິບັດຂອງບຸກຄົນຜູ້ທຸສີນ

ຄະຫະບໍດີທັງຫຼາຍ ສີນວິບັດຂອງບຸກຄົນຜູ້ທຸສີນ ມີໂທດ ໕ ປະການນີ້ແລ

# ອານິສົງແຫ່ງສີນສົມບັດ ໕ ປະການ

ຄະຫະບໍດີທັງຫຼາຍ ສີນສົມບັດຂອງບຸກຄົນຜູ້ມີສີນ ມີອານິສົງ ໕ ປະການ ອານິສົງ ໕ ປະການນີ້ ຄື

໑. ຄະຫະບໍດີທັງຫຼາຍ ບຸກຄົນຜູ້ມີສີນ ມີສີນສົມບັດໃນໂລກນີ້ ຍ່ອມໄດ້ໂພຄະຊັບໃຫຍ່ຫຼວງ ເຊິ່ງມີຄວາມບໍ່ຜະໝາດເປັນເຫດ ນີ້ເປັນອານິສົງປະການທີ ໑ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

໒. ຄະຫະບໍດີທັງຫຼາຍ ກິດຕິສັບອັນດີງາມຂອງບຸກຄົນຜູ້ມີສີນ ມີສີນສົມບັດ ຍ່ອມກະຈາຍໄປ ນີ້ເປັນອານິສົງປະການທີ ໒ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

໓. ຄະຫະບໍດີທັງຫຼາຍ ບຸກຄົນຜູ້ມີສີນ ມີສີນສົມບັດ ຈະເຂົ້າໄປສູ່ບໍລິສັດໃດ ໆ ຈະເປັນຂັດຕິຍະບໍລິສັດກໍຕາມ ພາມມະນະບໍລິສັດກໍຕາມ ຄະຫະບໍດີບໍລິສັດກໍຕາມ ສະມະນະບໍລິສັດກໍຕາມ ຍ່ອມແກ່ກ້າ ບໍ່ເກີ້ເຂີນເຂົ້າໄປ ນີ້ເປັນອານິສົງປະການທີ ໓ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

໔. ຄະຫະບໍດີທັງຫຼາຍ ບຸກຄົນຜູ້ມີສີນ ມີສີນສົມບັດ ຍ່ອມບໍ່ຫຼົງລືມສະຕິຕາຍ ນີ້ເປັນອານິສົງປະການທີ ໔ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

໕. ຄະຫະບໍດີທັງຫຼາຍ ບຸກຄົນຜູ້ມີສີນ ມີສີນສົມບັດ ຫຼັງຈາກຕາຍແລ້ວ ຍ່ອມໄປບັງເກີດໃນສຸກຄະຕິໂລກສະຫວັນ ນີ້ເປັນອານິສົງປະການທີ ໕ ແຫ່ງສີນສົມບັດຂອງບຸກຄົນຜູ້ມີສີນ

ຄະຫະບໍດີທັງຫຼາຍ ສີນສົມບັດຂອງບຸກຄົນຜູ້ທຸສີນ ມີອານິສົງ ໕ ປະການນີ້ແລ

ເມື່ອຊົງສະແດງທຳມີກະຖາຊີ້ແຈ່ງໃຫ້ອຸປາສົກອຸປາສິກາຊາວປາຕະລິຄາມເຫັນແຈ້ງ ຊວນໃຫ້ ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາຈົນເດິກດື່ນແລ້ວ ຊົງສັ່ງກັບດ້ວຍຮັບສັ່ງວ່າ ຣາຕີໃກ້ຈະສະຫວ່າງ ບັດນີ້ພວກທ່ານ ຈົ່ງຮູ້ເວລາທີ່ຈະກັບເທີ້ນ

ພວກເຂົາຂາບທູນຮັບສະໜອງພຣະພຸດທະດຳຣັດແລ້ວລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວກັບໄປ ເມື່ອພວກເຂົາກັບໄປໄດ້ບໍ່ດົນ ພຣະຜູ້ມີພຣະພາກເຈົ້າໄດ້ສະເດັດເຂົ້າສຸນຍາຄານ

# ໑໗໘. ສຸນິທະວັດສະກາຣະວັດຖຸ

## ວ່າດ້ວຍມະຫາອຳໝາດສຸນິທະແລະວັດສະກາຣະ

## ເລື່ອງພຸດທະທຳນາຍກ່ຽວກັບນະຄອນປາຕະລີບຸດ

[໘໗໙] ສະໄໝນັ້ນ ສຸນິທະແລະວັດສະກາຣະຜູ້ເປັນມະຫາອຳໝາດແຫ່ງມະຄົດຣັດກຳລັງສ້າງ ເມືອງທີ່ປາຕະລິຄາມເພື່ອປ້ອງກັນພວກວັດຊີ

ພຣະຜູ້ມີພຣະພາກເຈົ້າຊົງຕື່ນບັນທົມເວລາໃກ້ຮຸ່ງ ຊົງເລັງຈັກຂຸທິບອັນບໍລິສຸດເໜືອມະນຸດໄດ້ທອດພຣະເນດເຫັນທວຍເທບເປັນຈຳນວນຫຼາຍກຳລັງຢຶດຄອງທີ່ດິນໃນປາຕະລິຄາມ ຄື ທວຍເທບມີສັກໃຫຍ່ຢຶດຄອງທີ່ດິນໃນປະເທດໃດ ຈິດຂອງພວກພຣະຣາຊາແລະຣາຊະມະຫາອຳໝາດຜູ້ສູງສັກຕ່າງນ້ອມເພື່ອສ້າງນິເວດໃນປະເທດນັ້ນ໒

ທວຍເທບທີ່ມີສັກຊັ້ນກາງຢຶດຄອງທີ່ດິນໃນປະເທດໃດ ຈິດຂອງພວກພຣະຣາຊາ ແລະຣາຊະມະຫາອຳໝາດທີ່ມີສັກຊັ້ນກາງຕ່າງນ້ອມເພື່ອສ້າງນິເວດໃນປະເທດນັ້ນ

ທວຍເທບທີ່ມີສັກຊັ້ນຕ່ຳຢຶດຄອງທີ່ດິນໃນປະເທດໃດ ຈິດຂອງພວກພຣະຣາຊາແລະຣາຊະມະຫາອຳໝາດຊັ້ນຕ່ຳຕ່າງນ້ອມເພື່ອສ້າງນິເວດໃນປະເທດນັ້ນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງຕັດຮຽກທ່ານພຣະອານົນມາຖາມວ່າ "ອານົນ ຄົນທີ່ສ້າງເມືອງທີ່ປາຕະລິຄາມນັ້ນເປັນພວກໃດ"

ທ່ານພຣະອານົນຂາບທູນວ່າ "ສຸນິທະແລະວັດສະກາຣະຜູ້ເປັນມະຫາອຳໝາດແຫ່ງມະຄົດຣັດ ກຳລັງສ້າງເມືອງທີ່ປາຕະລິຄາມ ເພື່ອປ້ອງກັນພວກວັດຊີ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອານົນ ສຸນິທະແລະວັດສະກາຣະຜູ້ເປັນມະຫາອຳໝາດແຫ່ງມະຄົດຣັດ ກຳລັງສ້າງເມືອງທີ່ປາຕະລິຄາມເພື່ອປ້ອງກັນພວກວັດຊີ ຄືໄດ້ປຶກສາກັບທວຍເທບຊັ້ນດາວະດຶງສາ ອານົນ ເມື່ອຕອນເຊົ້າມືດຄືນນີ້ ເຮົາລຸກຂຶ້ນເລັງຈັກຂຸທິບອັນບໍລິສຸດເໜືອມະນຸດ ເຫັນທວຍເທບເປັນຈຳນວນຫຼາຍກຳລັງຢຶດຄອງທີ່ດິນໃນປາຕະລິຄາມ ຄື

ທວຍເທບມີສັກໃຫຍ່ຢຶດຄອງທີ່ດິນໃນປະເທດໃດ ຈິດຂອງພວກພຣະຣາຊາແລະຣາຊະມະຫາອຳໝາດຜູ້ສູງສັກຕ່າງນ້ອມເພື່ອສ້າງນິເວດໃນປະເທດນັ້ນ

ທວຍເທບທີ່ມີສັກຊັ້ນກາງຢຶດຄອງທີ່ດິນໃນປະເທດໃດ ຈິດຂອງພວກພຣະຣາຊາແລະຣາຊະມະຫາອຳໝາດທີ່ມີສັກຊັ້ນກາງຕ່າງນ້ອມເພື່ອສ້າງນິເວດໃນປະເທດນັ້ນ

ທວຍເທບທີ່ມີສັກຊັ້ນຕໍ່າຢຶດຄອງທີ່ດິນໃນປະເທດໃດ ຈິດຂອງພວກພຣະຣາຊາແລະຣາຊະມະຫາອຳໝາດຊັ້ນຕໍ່າຕ່າງນ້ອມເພື່ອສ້າງນິເວດໃນປະເທດນັ້ນ ນະຄອນປາຕະລີບຸດຈະແຕກດ້ວຍໄພ ໓ ຢ່າງ

ອານົນ ຕະຫຼອດພື້ນທີ່ອັນເປັນຍ່ານຊຸມຊົນແຫ່ງອາຣະຍະຊົນແລະເປັນທາງຄ້າຂາຍນະຄອນນີ້ ຈະເປັນນະຄອນຊັ້ນເອກ ເປັນທຳເລຄ້າຂາຍ ຊື່ປາຕະລີບຸດ ແລະນະຄອນປາຕະລີບຸດຈະເກີດອັນຕະລາຍ ໓ ຢ່າງ ຄື ອັກຄີໄພ ອຸທະກະໄພ ຫຼືການແຕກຄວາມສາມັກຄີພາຍໃນກຸ່ມ"

ຄັ້ງນັ້ນ ສຸນິທະແລະວັດສະກາຣະຜູ້ເປັນມະຫາອຳໝາດແຫ່ງມະຄົດຣັດ ພາກັນໄປເຝົ້າພຣະຜູ້ມີພຣະພາກຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຂາບທູນສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈ ພໍໃຫ້ຣະນຶກເຖິງກັນແລະກັນແລ້ວໄດ້ຢືນທີ່ສົມຄວນ ສຸນິທະແລະວັດສະກາຣະມະຫາອຳມາດແຫ່ງມະຄົດຣັດ ຜູ້ຢືນທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂໍພຣະໂຄດົມຜູ້ຈະເລີນພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງພວກຂ້າພຣະອົງເພື່ອຈະເລີນກຸສົນໃນມື້ນີ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ຄັ້ງນັ້ນ ສຸນິທະແລະວັດສະກາຣະຜູ້ເປັນມະຫາອຳໝາດແຫ່ງມະຄົດຣັດຮູ້ວ່າພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ລຸກຈາກອາສະນະແລ້ວກັບໄປ ລຳດັບນັ້ນ ສຸນິທະແລະວັດສະກາຣະຜູ້ເປັນມະຫາອຳໝາດແຫ່ງມະຄົດຣັດໃຫ້ຈັດກຽມຂອງຫຍໍ້າຂອງສັນອັນປະນີດແລ້ວໃຫ້ເຈົ້າໜ້າທີ່ໄປຂາບທູນພັດຕະການພຣະຜູ້ມີພຣະພາກເຈົ້າວ່າ "ເຖິງເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກແລ້ວ ຊົງຖືບາດແລະຈີວອນ ສະເດັດໄປທີ່ຈັດລ້ຽງຂອງສຸນິທະແລະວັດສະກາຣະຜູ້ເປັນມະຫາອຳໝາດແຫ່ງມະຄົດຣັດປະທັບນັ່ງເທິງອາສະນະທີ່ຈັດຖວາຍ ພ້ອມດ້ວຍພິກຂຸສົງ ລຳດັບນັ້ນ ສຸນິທະແລະວັດສະກາຣະຜູ້ເປັນມະຫາອຳໝາດແຫ່ງມະຄົດຣັດ ໄດ້ນຳຂອງຫຍໍ້າຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດ ຫ້າມພັດຕາຫານແລ້ວຊົງລະພຣະຫັດຈາກບາດ ໄດ້ນັ່ງເຝົ້າຢູ່ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາ ແກ່ມະຫາອຳໝາດທັງສອງດ້ວຍພຣະຄາຖາເຫຼົ່ານີ້ວ່າ

ບັນດິດຢູ່ໃນບ່ອນໃດ ເມື່ອລ້ຽງດູທ່ານຜູ້ມີສິນ ຜູ້ສັງລວມ
ປະພຶດພົມມະຈັນໃນບ່ອນທີ່ຕົນຢູ່ນັ້ນເພິ່ງອຸທິດທັກຂິນາ[๑]
ແກ່ເຫຼົ່າທວຍເທບຜູ້ສະຖິດຢູ່ໃນບ່ອນນັ້ນ
ທວຍເທບເຫຼົ່ານັ້ນອັນເຂົາບູຊາແລ້ວຍ່ອມບູຊາຕອບ

ອັນເຂົານັບຖືແລ້ວຍ່ອມນັບຖືຕອບ
ຈາກນັ້ນຍ່ອມອະນຸເຄາະບັນດິດນັ້ນເປັນການຕອບແທນ
ຄືມານດາອະນຸເຄາະບຸດຜູ້ເກີດແຕ່ອົກ
ດັ່ງນັ້ນ ຜູ້ທີ່ທວຍເທບອະນຸເຄາະແລ້ວ
ຍ່ອມພົບເຫັນແຕ່ສິ່ງທີ່ຈະເລີນທຸກເມື່ອ”[໔]

ເມື່ອພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາສຸນີທະແລະວັດສະກາຣະຜູ້ເປັນມະຫາອຳໝາດແຫ່ງມະຄົດຮັດດ້ວຍພຣະຄາຖາເຫຼົ່ານີ້ແລ້ວ ໄດ້ສະເດັດລຸກຈາກອາສະນະແລ້ວສະເດັດກັບ

## ເລື່ອງປະຕູໂຄດົມແລະທ່າໂຄດົມທີ່ແມ່ນ້ຳຄົງຄາ

ສະໄໝນັ້ນ ສຸນີທະແລະວັດສະກາຣະຜູ້ເປັນມະຫາອຳໝາດແຫ່ງມະຄົດຮັດ ຕາມສົ່ງສະເດັດພຣະຜູ້ມີພຣະພາກເຈົ້າໄປທາງພຣະປິດສະດາງ (ທາງຫຼັງ) ດ້ວຍດຳຣິວ່າ “ມື້ນີ້ ປະຕູທີ່ພຣະສະມະນະໂຄດົມສະເດັດອອກຈະໄດ້ຊື່ວ່າປະຕູໂຄດົມ ທ່າທີ່ສະເດັດຂ້າມແມ່ນ້ຳຄົງຄາຈະໄດ້ຊື່ວ່າທ່າໂຄດົມ” ຕໍ່ມາ ປະຕູທີ່ພຣະຜູ້ມີພຣະພາກເຈົ້າສະເດັດຜ່ານໄປນັ້ນ ໄດ້ຜາກົດນາມວ່າປະຕູໂຄດົມ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດໄປທາງແມ່ນ້ຳຄົງຄາ ເວລານັ້ນ ແມ່ນ້ຳຄົງຄາມີນ້ຳເຕັມຝັ່ງ ນົກກາພໍດື່ມກິນໄດ້ ຄົນທັງຫຼາຍປະສົງຈະໄປຈາກຝັ່ງນີ້ສູ່ຝັ່ງນັ້ນ ຕ່າງກໍຫາເຮືອແພ ຫຼື ມັດແພໝາກບວບ ພຣະຜູ້ມີພຣະພາກເຈົ້າທອດພຣະເນດເຫັນຄົນເຫຼົ່ານັ້ນກຳລັງຫາເຮືອແພແລະມັດແພໝາກບວບຈະຂ້າມຟາກ ໄດ້ຊົງຫາຍໄປຈາກຝັ່ງແມ່ນ້ຳຄົງຄາໄປຜາກົດທີ່ຝັ່ງຟາກນັ້ນພ້ອມກັບພິກຂຸສົງ ຄືຄົນມີກຳລັງຢຽດແຂນອອກ ຫຼື ຄູ້ແຂນເຂົ້າ

ເມື່ອພຣະອົງຊົງຊາບຄວາມນີ້ແລ້ວ ຊົງເປ່ງອຸທານວ່າ

ຄົນພວກໜຶ່ງກຳລັງສ້າງຂົວຂ້າມສະໃຫຍ່
ໂດຍບໍ່ໃຫ້ເປິເປື້ອນດ້ວຍເລນຕົມ
ຂະນະທີ່ຄົນອີກພວກໜຶ່ງກຳລັງມັດທຸ່ນຢູ່
ຊົນຜູ້ສະຫຼາດໄດ້ຂ້າມພົ້ນໄປແລ້ວ”

## ໑໗໕. ໂກຕິຄາມະສັດຈະກະຖາ

### ວ່າດ້ວຍຊົງສະແດງອະຣິຍະສັດທີ່ໂກຕິຄາມ

[໔໗໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດໄປທາງໂກຕິຄາມ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ໂກຕິຄາມນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງກັບພິກຂຸທັງຫຼາຍໃນໂກຕິຄາມ ນັ້ນວ່າ "ພິກຂຸທັງຫຼາຍ ເຮົາແລະພວກທ່ານພະເນຈອນໄປຕະຫຼອດເວລາດົນນານເຖິງພຽງນີ້ ຍ້ອນບໍ່ຕັດສະຣູ້ແລະບໍ່ແທງຕະຫຼອດອະຣິຍະສັດ ໔ ໄດ້ແກ່ ເຮົາແລະພວກທ່ານພະເນຈອນໄປຕະຫຼອດເວລາດົນນານເຖິງພຽງນີ້ ຍ້ອນບໍ່ຕັດສະຣູ້ແລະບໍ່ແທງຕະຫຼອດທຸກຂະອະຣິຍະສັດ ໆລໆ ທຸກຂະສະມຸທະຍະອະຣິຍະສັດ ໆລໆ ທຸກຂະນິໂຣທະອະຣິຍະສັດ ໆລໆ ເຮົາແລະພວກທ່ານພະເນຈອນໄປຕະຫຼອດເວລາດົນນານເຖິງພຽງນີ້ ຍ້ອນບໍ່ຕັດສະຣູ້ແລະບໍ່ແທງຕະຫຼອດທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ພິກຂຸທັງຫຼາຍ ແຕ່ບັດນີ້ ທຸກຂະອະຣິຍະສັດ ອັນເຮົາແລະພວກທ່ານໄດ້ຕັດສະຣູ້ແລະແທງຕະຫຼອດແລ້ວ ທຸກຂະສະມຸທະຍະອະຣິຍະສັດ ອັນເຮົາແລະພວກທ່ານໄດ້ຕັດສະຣູ້ແລະແທງຕະຫຼອດແລ້ວ ທຸກຂະນິໂຣທະອະຣິຍະສັດ ອັນເຮົາແລະພວກທ່ານໄດ້ຕັດສະຣູ້ ແລະແທງຕະຫຼອດແລ້ວ ທຸກຂະນິໂຣທະຄາມິນີປະຕິປະທາອະຣິຍະສັດ ອັນເຮົາແລະພວກທ່ານໄດ້ຕັດສະຣູ້ແລະ ແທງຕະຫຼອດແລ້ວ ເຮົາແລະພວກທ່ານຕັດຕັນຫາໃນພົບໄດ້ເດັດຂາດ ຕັນຫາທີ່ຈະນຳໄປເກີດໝົດແລ້ວ ບັດນີ້ຈຶ່ງບໍ່ມີການເກີດອີກຕໍ່ໄປ

### ນິຄົມຄາຖາ

ຍ້ອນບໍ່ເຫັນອະຣິຍະສັດ ໔ ຕາມເປັນຈິງ
ເຮົາແລະພວກທ່ານຈຶ່ງຕ້ອງທ່ອງທ່ຽວໄປໃນຊາດນັ້ນ ໆ ຕະຫຼອດເວລາດົນນານ
ແຕ່ຍ້ອນໄດ້ເຫັນອະຣິຍະສັດ ໔
ເຮົາແລະພວກທ່ານຈຶ່ງຖອນຕັນຫາທີ່ຈະນຳໄປເກີດໄດ້
ຕັດຮາກແຫ່ງທຸກໄດ້ເດັດຂາດ ບັດນີ້ຈຶ່ງບໍ່ມີການເກີດອີກຕໍ່ໄປ

## ໑໗໖. ອຳພະປາລີວັດຖຸ

### ວ່າດ້ວຍຍິງງາມເມືອງຊື່ອຳພະປາລີ

[໔໗໘] ຍິງງາມເມືອງຊື່ອຳພະປາລີໄດ້ຮູ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າສະເດັດເຖິງໂກຕິຄາມແລ້ວ" ຈຶ່ງໃຫ້ຈັດຍານພາຫະນະຄັນງາມ ຂຶ້ນຍານພາຫະນະຄັນງາມ ມີຍານພາຫະນະຄັນງາມຫຼາຍຄັນເດີນທາງອອກຈາກນະຄອນເວສາລີ ເພື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ

ເດີນທາງໄປດ້ວຍຍານພາຫະນະຕະຫຼອດພື້ນທີ່ທີ່ຍານພາຫະນະຈະໄປໄດ້ ແລ້ວລົງຍ່າງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວໄດ້ນັ່ງເຝົ້າຢູ່ທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ຍິງງາມເມືອງຊື່ອຳພະປາລີຜູ້ນັ່ງທີ່ສົມຄວນເຫັນແຈ້ງຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນ ແຈ່ມໃສດ້ວຍທຳມີກະຖາ

ລຳດັບນັ້ນ ຍິງງາມເມືອງຊື່ອຳພະປາລີຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງຂ້ານ້ອຍເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ຄັ້ງນັ້ນ ຍິງງາມເມືອງຊື່ອຳພະປາລີຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງລຸກຈາກອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວກັບໄປ

## ໑໗໗. ລິດສະຫວີວັດຖຸ

## ວ່າດ້ວຍເຈົ້າລິດສະຫວີ

[໔໗໙] ພວກເຈົ້າລິດສະຫວີຊາວນະຄອນເວສາລີໄດ້ຊົງສະດັບຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າສະເດັດມາເຖິງໂກຕິຄາມແລ້ວ" ຈຶ່ງໃຫ້ຈັດຍານພາຫະນະຄັນງາມ ຂຶ້ນຍານພາຫະນະຄັນງາມ ມີຍານພາຫະນະຄັນງາມຫຼາຍຄັນ ສະເດັດອອກຈາກນະຄອນເວສາລີ ເພື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ເຈົ້າລິດສະຫວີລາງພວກຂຽວ ຄື ຊົງມີສີຂຽວ ຊົງພັດສີຂຽວ ຊົງເຄື່ອງປະດັບຂຽວ ເຈົ້າລິດສະຫວີລາງພວກເຫຼືອງ ຄື ຊົງມີສີເຫຼືອງ ຊົງພັດເຫຼືອງ ຊົງເຄື່ອງປະດັບເຫຼືອງ ເຈົ້າລິດສະຫວີລາງພວກແດງ ຄື ຊົງມີສີແດງ ຊົງພັດແດງ ຊົງເຄື່ອງປະດັບແດງ ເຈົ້າລິດສະຫວີລາງພວກຂາວ ຄື ຊົງມີສີຂາວ ຊົງພັດຂາວ ຊົງເຄື່ອງປະດັບຂາວ

ຄັ້ງນັ້ນ ຍິງງາມເມືອງຊື່ອຳພະປາລີເຮັດໃຫ້ງອນລົດກະທົບງອນລົດ ແອກກະທົບແອກ ລໍ້ກະທົບລໍ້ ເພົາກະທົບເພົາ ຂອງເຈົ້າລິດສະຫວີໜຸ່ມ ໆ ລຳດັບນັ້ນ ພວກເຈົ້າລິດສະຫວີເຫຼົ່ານັ້ນຈຶ່ງໄດ້ຕັດກັບຍິງງາມເມືອງຊື່ອຳພະປາລີດັ່ງນີ້ວ່າ "ແມ່ອຳພະປາລີ ເປັນຫຍັງທ່ານຈຶ່ງເຮັດໃຫ້ງອນລົດກະທົບງອນລົດ ແອກກະທົບແອກ ລໍ້ກະທົບລໍ້ ເພົາກະທົບເພົາ ຂອງເຈົ້າລິດສະຫວີໜຸ່ມ ໆ ນໍ"

ນາງຕອບວ່າ "ພຣະລູກເຈົ້າທັງຫຼາຍ ຂ້ານ້ອຍໄດ້ນິມົນພິກຂຸສົງມີພຣະພຸດທະເຈົ້າເປັນປະທານເພື່ອຈະເລີນກຸສົນໃນມື້ອື່ນນີ້ແລ້ວ"

ເຈົ້າລິດສະຫວີທັງຫຼາຍຕັດວ່າ "ແມ່ອຳພະປາລີ ທ່ານຈົ່ງໃຫ້ພວກເຮົາຖວາຍພັດຕາຫານຄາບນີ້ດ້ວຍຊັບ ໑໐໐,໐໐໐ ກະຫາປະນະເທີ້ນ"

ນາງຕອບວ່າ "ພຣະລູກເຈົ້າທັງຫຼາຍ ຖ້າແມ່ນພວກທ່ານຈະປະທານນະຄອນເວສາລີພ້ອມກັບຊົນນະບົດ ຂ້ານ້ອຍກໍໃຫ້ພວກທ່ານຖວາຍພັດຕາຫານຄາບນີ້ບໍ່ໄດ້"

ເຈົ້າລິດສະຫວີທັງຫຼາຍຊົງດີດອົງຄຸລີຕັດວ່າ "ຜູ້ຈະເລີນທັງຫຼາຍ ພວກເຮົາປຣາໄຊນາງອຳພະປາລີສາແລ້ວ ຜູ້ຈະເລີນທັງຫຼາຍ ພວກເຮົາປຣາໄຊນາງອຳພະປາລີສາແລ້ວ" ຈຶ່ງພາກັນໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່

ພຣະຜູ້ມີພຣະພາກເຈົ້າໄດ້ທອດພຣະເນດເຫັນເຈົ້າລິດສະຫວີເຫຼົ່ານັ້ນກຳລັງສະເດັດມາແຕ່ໄກ ຈຶ່ງຮັບສັ່ງພິກຂຸທັງຫຼາຍມາວ່າ "ພິກຂຸທັງຫຼາຍ ເຫຼົ່າພິກຂຸທີ່ບໍ່ເຄີຍເຫັນພວກເທວະດາຊັ້ນຕາວະຕິງສາກໍຈົ່ງເບິ່ງບໍລິສັດເຈົ້າລິດສະຫວີ ຈົ່ງພິຈາລະນາເບິ່ງບໍລິສັດເຈົ້າລິດສະຫວີ ຈົ່ງທຽບຄຽງເບິ່ງບໍລິສັດເຈົ້າລິດສະຫວີກັບພວກເທວະດາຊັ້ນຕາວະຕິງສາ"

ຄັ້ງນັ້ນ ພວກເຈົ້າລິດສະຫວີສະເດັດຂຶ້ນຍານພາຫະນະໄປຕະຫຼອດພື້ນທີ່ທີ່ຍານພາຫະນະຈະໄປໄດ້ ແລ້ວສະເດັດລົງຈາກຍານພາຫະນະ ດຳເນີນໄປດ້ວຍພຣະບາດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວປະທັບນັ່ງທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ພວກເຈົ້າລິດສະຫວີຜູ້ປະທັບນັ່ງທີ່ສົມຄວນເຫັນແຈ້ງຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ລຳດັບນັ້ນ ພວກເຈົ້າລິດສະຫວີຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໂຜດຮັບໂພຊະນາຫານຂອງພວກຂ້າພຣະອົງເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອາດຕະມາຮັບນິມົນສັນພັດຕາຫານຂອງຍິງງາມເມືອງຊື່ອຳພະປາລີໄວ້ເພື່ອຈະເລີນກຸສົນໃນມື້ອື່ນນີ້ແລ້ວ"

ລຳດັບນັ້ນ ພວກເຈົ້າລິດສະຫວີຊົງດີດອົງຄຸລີຕັດວ່າ "ຜູ້ຈະເລີນທັງຫຼາຍ ພວກເຮົາປຣາໄຊຍິງງາມເມືອງຊື່ອຳພະປາລີສາແລ້ວ ຜູ້ຈະເລີນທັງຫຼາຍ ພວກເຮົາປຣາໄຊຍິງງາມເມືອງຊື່ອຳພະປາລີສາແລ້ວ" ຊົງຊົມຊື່ນຍິນດີພາສິດຂອງພຣະຜູ້ມີພຣະພາກເຈົ້າ ສະເດັດລຸກຈາກອາສະນະຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວສະເດັດກັບ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໂກຕິຄາມຕາມອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນາທິກະຄາມ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບອຍູ່ທີ່ພຣະຕຳໜັກຕຶກ ໃນນາທິກະຄາມນັ້ນ

ຄືນນັ້ນຍິງງາມເມືອງຊື່ອຳພະປາລີສັ່ງໃຫ້ຈັດກຽມໂພຊະນາຫານອັນປະນີດໃນສວນຂອງຕົນແລ້ວໃຫ້ຄົນໄປຂາບທູນພັດຕະການພຣະຜູ້ມີພຣະພາກເຈົ້າວ່າ "ເຖິງເວລາແລ້ວ ຂ້ານ້ອຍພັດຕາຫານສຳເລັດແລ້ວ"

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກແລ້ວ ຊົງຖືບາດແລະຈີວອນ ສະເດັດໄປທີ່ຈັດລ້ຽງຂອງຍິງງາມເມືອງຊື່ອຳພະປາລີ ປະທັບນັ່ງເທິງອາສະນະທີ່ຈັດຖວາຍພ້ອມດ້ວຍພິກຂຸສົງ ນາງໄດ້ນຳຂອງຫຍ້ຳຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຊົງຫ້າມພັດຕາຫານແລ້ວລະພຣະຫັດຈາກບາດ ຈຶ່ງໄດ້ນັ່ງເຝົ້າຢູ່ທີ່ສົມຄວນ ຍິງງາມເມືອງຊື່ອຳພະປາລີ ຜູ້ນັ່ງເຝົ້າຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງຂໍຖວາຍສວນໝາກມ່ວງນີ້ແກ່ພິກຂຸສົງມີພຣະພຸດທະເຈົ້າເປັນປະທານ"

ພຣະຜູ້ມີພຣະພາກເຈົ້າຊົງຮັບອາຮາມແລ້ວ ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ຍິງງາມເມືອງຊື່ອຳພະປາລີເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຊົງລຸກຈາກອາສະນະສະເດັດໄປທາງປ່າມະຫາວັນ ໄດ້ຂ່າວວ່າພຣະຜູ້ມີພຣະພາກເຈົ້າປະທັບຢູ່ກູຕາຄາຣະສາລາປ່າມະຫາວັນ ໃນນະຄອນເວສາລີນັ້ນ

**ລິດສະຫວີພານະວານທີ ໖ ຈົບ**

## ໑໗໘. ສີຫະເສນາປະຕິວັດຖຸ
## ວ່າດ້ວຍສີຫະເສນາບໍດີສາວົກຂອງນີຄົນນາຕະບຸດ

[໘໙໐] ສະໄໝນັ້ນ ເຈົ້າລິດສະຫວີຜູ້ມີຊື່ສຽງນັ່ງປະຊຸມກັນໃນສັນຖາຄານ[១]ກ່າວສັນເສີນພຣະພຸດ ກ່າວສັນເສີນພຣະທຳ ກ່າວສັນເສີນພຣະສົງໂດຍປະການຕ່າງ ໆ

ສະໄໝນັ້ນ ສີຫະເສນາບໍດີສາວົກຂອງນິຄົນ ນັ່ງຢູ່ໃນທີ່ປະຊຸມນັ້ນດ້ວຍ ລຳດັບນັ້ນ ສີຫະເສນາບໍດີໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຕ້ອງເປັນພຣະອະຣະຫັນຕະ ສຳມາສຳພຸດທະເຈົ້າແນ່ ຍ້ອນເຈົ້າລິດສະຫວີຜູ້ມີຊື່ສຽງເຫຼົ່ານີ້ນັ່ງປະຊຸມກັນໃນສັນຖາຄານຕ່າງກໍກ່າວສັນເສີນພຣະພຸດ ກ່າວສັນເສີນພຣະທຳ ກ່າວສັນເສີນພຣະສົງ ໂດຍປະການຕ່າງ ໆ ຢ່າຈັ່ງຊັ້ນເລີຍ ເຮົາຄວນເຂົ້າໄປເຝົ້າພຣະຜູ້ມີພຣະພາກອະຣະຫັນຕະສຳມາ ສຳພຸດທະເຈົ້າພຣະອົງນັ້ນ" ຕໍ່ມາ ເຂົາເຂົ້າໄປຫານິຄົນນາຕະບຸດຮອດບ່ອນຢູ່ ໄຫວ້ແລ້ວນັ່ງຢູ່ທີ່ສົມຄວນ ໄດ້ກ່າວກັບນິຄົນນາຕະບຸດດັ່ງນີ້ວ່າ "ຂ້າພະເຈົ້າປາຖະໜາຈະໄປເຝົ້າພຣະສະມະນະໂຄດົມ ຂ້ານ້ອຍ"

ນິຄົນນາຕະບຸດກ່າວວ່າ "ສີຫະ ທ່ານເປັນຜູ້ສອນໃຫ້ເຮັດ ເປັນຫຍັງຈຶ່ງຈະໄປເຝົ້າພຣະສະມະນະໂຄດົມຜູ້ສອນບໍ່ໃຫ້ເຮັດບໍ ສີຫະ ຍ້ອນພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດຍ່ອມສະແດງທຳເພື່ອການບໍ່ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ"

ຄັ້ງນັ້ນແລ ສີຫະເສນາບໍດີຈຶ່ງລົ້ມເລີກຄວາມຕັ້ງໃຈທີ່ຈະໄປເຝົ້າພຣະຜູ້ມີພຣະພາກເຈົ້າ

ແມ່ນເທື່ອທີ ໒ ຯລຯ

ແມ່ນເທື່ອທີ ໓ ເຈົ້າລິດສະຫວີຜູ້ມີຊື່ສຽງນັ່ງປະຊຸມຢູ່ໃນສັນຖາຄານ ກ່າວສັນເສີນ ພຣະພຸດ ກ່າວສັນເສີນພຣະທຳ ກ່າວສັນເສີນພຣະສົງ ໂດຍປະການຕ່າງ ໆ

ແມ່ນເທື່ອທີ ໓ ສີຫະເສນາບໍດີກໍມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ຕ້ອງເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າແນ່ ຍ້ອນເຈົ້າລິດສະຫວີຜູ້ມີຊື່ສຽງເຫຼົ່ານີ້ນັ່ງປະຊຸມກັນໃນສັນຖາຄານ ຕ່າງກໍກ່າວສັນເສີນພຣະພຸດ ກ່າວສັນເສີນພຣະທຳ ກ່າວສັນເສີນພຣະສົງ ໂດຍປະການຕ່າງ ໆ ກໍພວກນິຄົນເຫຼົ່ານີ້ ເຮົາຈະບອກບໍ່ບອກກໍບໍ່ມີປະໂຫຍດອັນໃດ ຢ່າຈັ່ງຊັ້ນເລີຍ ເຮົາຈະບໍ່ບອກພວກນິຄົນແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກພຣະອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນ"

ຄັ້ງນັ້ນ ສີຫະເສນາບໍດີເດີນທາງອອກຈາກນະຄອນເວສາລີແຕ່ເຊົ້າ ພ້ອມດ້ວຍລົດ ໕໐໐ ຄັນ ເດີນທາງໄປດ້ວຍຍານພາຫະນະຕະຫຼອດພື້ນທີ່ທີ່ຍານພາຫະນະຈະໄປໄດ້ແລ້ວລົງຍ່າງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ສີຫະເສນາບໍດີຜູ້ນັ່ງຢູ່ທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ຂ້າພຣະອົງໄດ້ຟັງມາດັ່ງນີ້ວ່າ ພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດ ຊົງສະແດງທຳເພື່ອການບໍ່ໃຫ້ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ ຂ້ານ້ອຍ ຄົນເຫຼົ່າໃດກ່າວແນວນີ້ວ່າ ພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດ ສະແດງທຳເພື່ອການບໍ່ໃຫ້ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ ຂ້ານ້ອຍ ຄົນເຫຼົ່ານັ້ນຈະຊື່ວ່າກ່າວກົງຕາມທີ່ພຣະຜູ້ມີພຣະພາກເຈົ້າຕັດໄວ້ ບໍ່ຊື່ວ່າກ່າວຕູ່ພຣະຜູ້ມີພຣະພາກເຈົ້າດ້ວຍຄຳຕົວະບໍ ຊື່ວ່າກ່າວແກ້ຢ່າງ

ສົມເຫດສົມຜົນບໍ ບໍ່ມີແດ່ບໍທີ່ຄໍາກ່າວເຊັ່ນນັ້ນແລະຄໍາກ່າວຕໍ່ ໆ ກັນມາ ຈະເປັນເຫດໃຫ້ຖືກຕໍາໜິໄດ້ ຍ້ອນຂ້າພຣະອົງບໍ່ປະສົງຈະກ່າວຕູ່ພຣະຜູ້ມີພຣະພາກເຈົ້າເລີຍ"

ຂໍ້ກ່າວຫາກອົງຄົນທົ່ວໄປ ໘ ປະການ

[໔໗໑] ພຣະຜູ້ມີພຣະພາກເຈົ້າຕັດວ່າ

໑. ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດ ຊົງສະແດງທໍາເພື່ອການບໍ່ໃຫ້ເຮັດ ທັງແນະນໍາພວກສາວົກຕາມແນວນັ້ນ ນັ້ນມີມູນຢູ່
໒. ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຜູ້ສອນໃຫ້ເຮັດ ສະແດງທໍາເພື່ອການໃຫ້ເຮັດ ທັງແນະນໍາພວກສາວົກຕາມແນວນັ້ນ ນັ້ນມີມູນຢູ່
໓. ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຜູ້ສອນໃຫ້ທໍາລາຍ ສະແດງທໍາເພື່ອຄວາມທໍາລາຍ ທັງແນະນໍາພວກສາວົກຕາມແນວນັ້ນ ນັ້ນມີມູນຢູ່
໔. ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນຊ່າງລັງກຽດ ສະແດງທໍາເພື່ອຄວາມລັງກຽດ ທັງແນະນໍາພວກສາວົກຕາມແນວນັ້ນ ນັ້ນມີມູນຢູ່
໕. ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນຊ່າງກໍາຈັດ ສະແດງທໍາເພື່ອຄວາມກໍາຈັດ ທັງແນະນໍາພວກສາວົກຕາມແນວນັ້ນ ນັ້ນມີມູນຢູ່
໖. ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນຊ່າງເຜົາຜານ ສະແດງທໍາເພື່ອຄວາມເຜົາຜານ ທັງແນະນໍາພວກສາວົກຕາມແນວນັ້ນ ນັ້ນມີມູນຢູ່
໗. ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນບໍ່ຜຸດບໍ່ເກີດສະແດງທໍາເພື່ອບໍ່ຜຸດບໍ່ເກີດ ທັງແນະນໍາພວກສາວົກຕາມແນວນັ້ນ ນັ້ນມີມູນຢູ່
໘. ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຜູ້ເບົາໃຈ ສະແດງທໍາເພື່ອຄວາມເບົາໃຈ ທັງແນະນໍາພວກສາວົກຕາມແນວນັ້ນ ນັ້ນມີມູນຢູ່

## ພຣະດໍາຣັດແກ້ຂໍ້ກ່າວຫາ ໘ ປະການ

[໔໗໒] ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດຊົງສະແດງທໍາເພື່ອການບໍ່ໃຫ້ເຮັດ ທັງແນະນໍາພວກສາວົກຕາມແນວນັ້ນ ນັ້ນ ຊື່ວ່າມີມູນຢູ່ ເປັນແນວໃດ?

໑. ສີຫະ ຍ້ອນເຮົາສອນບໍ່ໃຫ້ເຮັດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຕະຫຼອດ ເຖິງການບໍ່ໃຫ້ເຮັດບາບອະກຸສົນທໍາຕ່າງ ໆ ຂໍ້ທີ່ເຂົາກ່າວຫາເຮົາວ່າ

ພຣະສະມະນະໂຄດົມເປັນຜູ້ສອນບໍ່ໃຫ້ເຮັດ ສະແດງທຳເພື່ອການບໍ່ໃຫ້ເຮັດ ທັງແນະນຳ ພວກສາວົກຕາມແນວນັ້ນ ນີ້ແລ ມີມູນຢູ່

ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຜູ້ສອນໃຫ້ເຮັດ ສະແດງທຳເພື່ອການໃຫ້ເຮັດ ທັງແນະນຳພວກສາວົກຕາມແນວນັ້ນ ນັ້ນ ມີມູນຢູ່ ເປັນແນວໃດ?

໔. ສີຫະ ຍ້ອນເຮົາສອນໃຫ້ເຮັດກາຍສຸດຈະຣິດ ວະຈີສຸດຈະຣິດ ມະໂນສຸດຈະຣິດ ຕະຫຼອດເຖິງ ການເຮັດກຸສົນທຳຕ່າງ ໆ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຜູ້ສອນໃຫ້ເຮັດ ຊົງສະແດງທຳເພື່ອການໃຫ້ເຮັດ ທັງແນະນຳພວກສາວົກ ຕາມແນວນັ້ນ ນີ້ແລ ມີມູນຢູ່

ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມສອນໃຫ້ທຳລາຍ ສະແດງທຳເພື່ອ ຄວາມທຳລາຍ ທັງແນະນຳພວກສາວົກຕາມແນວນັ້ນ ນັ້ນ ຊື່ວ່າມີມູນຢູ່ ເປັນແນວໃດ?

໖. ສີຫະ ຍ້ອນເຮົາສອນໃຫ້ທຳລາຍຣາຄະ ໂທສະ ໂມຫະ ຕະຫຼອດເຖິງໃຫ້ທຳລາຍບາບອະກຸສົນທຳຕ່າງ ໆ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມສອນໃຫ້ທຳລາຍ ສະແດງທຳເພື່ອຄວາມທຳລາຍ ທັງແນະນຳພວກສາວົກ ຕາມແນວນັ້ນ ນີ້ແລ ມີມູນຢູ່

ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນຊ່າງລັງກຽດ ສະແດງທຳ ເພື່ອຄວາມລັງກຽດ ທັງແນະນຳພວກສາວົກຕາມແນວນັ້ນ ນັ້ນ ຊື່ວ່າມີມູນຢູ່ ເປັນແນວໃດ?

໔. ສີຫະ ຍ້ອນເຮົາຊ່າງລັງກຽດກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດ ຕະຫຼອດເຖິງລັງກຽດບາບ ອະກຸສົນທຳຕ່າງ ໆ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນ ຊ່າງລັງກຽດ ສະແດງທຳເພື່ອຄວາມລັງກຽດ ທັງແນະນຳພວກສາວົກຕາມແນວນັ້ນ ນີ້ແລ ມີມູນຢູ່

ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນຊ່າງກຳຈັດ ສະແດງທຳເພື່ອຄວາມກຳຈັດ ທັງແນະນຳພວກສາວົກຕາມແນວນັ້ນ ນັ້ນ ຊື່ວ່າມີມູນຢູ່ ເປັນແນວໃດ?

໕. ສີຫະ ຍ້ອນເຮົາສະແດງທຳເພື່ອກຳຈັດຣາຄະ ໂທສະ ໂມຫະ ແລະບາບອະກຸສົນທຳຕ່າງ ໆ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນ ຊ່າງກຳຈັດ ສະແດງທຳເພື່ອຄວາມກຳຈັດ ທັງແນະນຳພວກສາວົກຕາມ ແນວນັ້ນ ນີ້ແລມີມູນຢູ່

ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນຊ່າງເຜົາຜານ ສະແດງທຳເພື່ອຄວາມເຜົາຜານ ທັງແນະນຳພວກສາວົກຕາມແນວນັ້ນ ນັ້ນ ຊື່ວ່າມີມູນຢູ່ ເປັນແນວໃດ?

໖. ສີຫະ ຍ້ອນເຮົາກ່າວເຖິງບາບອະກຸສົນທຳທັງຫຼາຍ ຄື ກາຍທຸດຈະຣິດ ວະຈີທຸດຈະຣິດ ມະໂນທຸດຈະຣິດວ່າເປັນສິ່ງທີ່ຄວນເຜົາຜານ ສີຫະ ເຮົາຮຽກຄົນທີ່ລະບາບອະກຸສົນທຳທັງຫຼາຍທີ່ຄວນເຜົາຜານໄດ້ໝົດສິ້ນ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າໄປແລ້ວເຫຼືອແຕ່ພື້ນທີ່ ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ວ່າເປັນຄົນຊ່າງເຜົາຜານ ຕະຖາຄົດລະບາບອະກຸສົນທຳຕ່າງ ໆ ທີ່ຄວນເຜົາຜານໄດ້ໝົດສິ້ນ ຂໍ້ທີ່ເຂົາກ່າວ ຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນຊ່າງເຜົາຜານ ສະແດງທຳເພື່ອການເຜົາຜານ ທັງແນະນຳພວກສາວົກຕາມແນວນັ້ນ ນີ້ແລມີມູນຢູ່

ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນບໍ່ຜຸດບໍ່ເກີດ ສະແດງທຳ ເພື່ອຄວາມບໍ່ຜຸດບໍ່ເກີດ ທັງແນະນຳພວກສາວົກຕາມແນວນັ້ນ ນັ້ນຊື່ວ່າມີມູນຢູ່ ເປັນແນວໃດ?

໗. ສີຫະ ຍ້ອນເຮົາຮຽກຄົນທີ່ລະການຢູ່ໃນທ້ອງແລະການເກີດໃໝ່ໄດ້ໝົດ ຕັດຮາກກົ່ນເຫງົ້າຄືຕົ້ນຕານທີ່ຖືກຕັດຮາກກົ່ນເຫງົ້າແລ້ວ ເຫຼືອແຕ່ພື້ນທີ່ເຮັດໃຫ້ບໍ່ມີ ເກີດຂຶ້ນຕໍ່ໄປບໍ່ໄດ້ວ່າ ເປັນຄົນບໍ່ຜຸດບໍ່ເກີດ ຕະຖາຄົດ ລະການ ຢູ່ໃນທ້ອງແລະການເກີດໃໝ່ໄດ້ໝົດແລ້ວ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຄົນບໍ່ຜຸດບໍ່ເກີດ ສະແດງທຳເພື່ອຄວາມບໍ່ຜຸດບໍ່ເກີດ ທັງແນະນຳພວກສາວົກຕາມແນວນັ້ນ ນີ້ແລມີມູນຢູ່

ສີຫະ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຜູ້ເບົາໃຈສະແດງທຳເພື່ອຄວາມເບົາໃຈ ທັງແນະນຳພວກສາວົກຕາມແນວນັ້ນ ນັ້ນ ຊື່ວ່າມີມູນຢູ່ ເປັນແນວໃດ?

໘. ສີຫະ ຍ້ອນເຮົາເປັນຜູ້ເບົາໃຈດ້ວຍຄວາມເບົາໃຈຢ່າງຍິ່ງ ສະແດງທຳເພື່ອຄວາມເບົາໃຈ ທັງແນະນຳພວກສາວົກຕາມແນວນັ້ນ ຂໍ້ທີ່ເຂົາກ່າວຫາເຮົາວ່າ ພຣະສະມະນະໂຄດົມເປັນຜູ້ເບົາໃຈ ສະແດງທຳເພື່ອຄວາມເບົາໃຈ ທັງແນະນຳພວກສາວົກຕາມແນວນັ້ນ ນີ້ແລມີມູນຢູ່

[໔໙] ເມື່ອພຣະຜູ້ມີພຣະພາກເຈົ້າຕັດຕອບແນວນີ້ແລ້ວ ສີຫະເສນາບໍດີໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຊົງປະກາດທຳ ແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືບຸກຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງ ຫຼືເຍືອງໄຟໃນ

ບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບ ພຣະອົງຜູ້ຈະເລີນ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງ ພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຂົ້າເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສີຫະ ທ່ານພິຈາຣະນາກ່ອນແລ້ວຈຶ່ງຕັດສິນໃຈເທີ້ນ ຄົນທີ່ມີຊື່ສຽງເຊັ່ນທ່ານຕ້ອງພິຈາຣະນາໃຫ້ຮອບຄອບກ່ອນຈຶ່ງເປັນການດີ"

ສີຫະເສນາບໍດີຂາບທູນວ່າ "ພຣະອົງຜູ້ຈະເລີນ ຂ້າພຣະອົງຍິນດີຊື່ນໃຈຢ່າງຍິ່ງ ຍ້ອນພຣະດຳຣັດ ທີ່ພຣະອົງຕັດວ່າ ທ່ານພິຈາຣະນາກ່ອນແລ້ວຈຶ່ງຕັດສິນໃຈເທີ້ນ ຄົນທີ່ມີຊື່ສຽງເຊັ່ນທ່ານຕ້ອງພິຈາຣະນາໃຫ້ຮອບຄອບກ່ອນຈຶ່ງເປັນການດີ ຄວາມຈິງ ຍ້ອນພວກອັນຍະເດຍຣະຖີໄດ້ຂ້າພຣະອົງເປັນສາວົກແລ້ວກໍປ່າວປະກາດໄປທົ່ວນະຄອນເວສາລີວ່າ ສີຫະ ເສນາບໍດີເປັນສາວົກຂອງພວກເຮົາ ແຕ່ພຣະອົງກັບຕັດວ່າ ທ່ານພິຈາຣະນາກ່ອນແລ້ວຈຶ່ງຄ່ອຍຕັດສິນໃຈເທີ້ນ ຄົນທີ່ມີຊື່ສຽງເຊັ່ນທ່ານຕ້ອງພິຈາຣະນາໃຫ້ຮອບຄອບກ່ອນຈຶ່ງເປັນການດີ ພຣະອົງຜູ້ຈະເລີນ ແມ່ນເທື່ອທີ ໒ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳ ແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າ ຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຂົ້າເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດເທີ້ນ"

## ຊົງສະໜັບສະໜູນໃຫ້ອຸບປະຖຳລັດທິທີ່ເຄີຍນັບຖືມາກ່ອນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສີຫະ ຕະກູນຂອງທ່ານເຄີຍເປັນທີ່ຕ້ອນຮັບພວກນີຄົນມາດົນ ດັ່ງນັ້ນ ທ່ານເພິ່ງໃສ່ໃຈວ່າຄວນໃຫ້ບິນທະບາດແກ່ພວກນີຄົນຜູ້ເຂົ້າໄປຕະກູນຕໍ່ໄປເທີ້ນ"

ສີຫະເສນາບໍດີຂາບທູນວ່າ "ພຣະອົງຜູ້ຈະເລີນ ຂ້າພຣະອົງຍິນດີຊື່ນໃຈຢ່າງຍິ່ງຍ້ອນພຣະດຳຣັດທີ່ພຣະອົງຕັດວ່າ ສີຫະ ຕະກູນຂອງທ່ານເຄີຍເປັນທີ່ຕ້ອນຮັບພວກນີຄົນມາດົນ ດັ່ງນັ້ນ ທ່ານເພິ່ງໃສ່ໃຈວ່າຄວນໃຫ້ບິນທະບາດແກ່ພວກນີຄົນຜູ້ເຂົ້າໄປຕະກູນຕໍ່ໄປເທີ້ນ ຂ້າພຣະອົງໄດ້ຟັງມາດັ່ງນີ້ ພຣະສະມະນະໂຄດົມຕັດແນວນີ້ວ່າ ຄວນໃຫ້ທານແກ່ເຮົາທໍ່ນັ້ນ ບໍ່ຄວນໃຫ້ທານແກ່ສາດສະດາອື່ນ ຄວນໃຫ້ທານແກ່ສາວົກຂອງເຮົາທໍ່ນັ້ນ ບໍ່ຄວນໃຫ້ທານແກ່ສາວົກຂອງສາດສະດາອື່ນ ທານທີ່ໃຫ້ແກ່ເຮົາທໍ່ນັ້ນມີຜົນຫຼາຍ ທານທີ່ໃຫ້ແກ່ສາດສະດາອື່ນບໍ່ມີຜົນຫຼາຍ ທານທີ່ໃຫ້ແກ່ສາວົກຂອງເຮົາທໍ່ນັ້ນມີຜົນຫຼາຍ ທານທີ່ໃຫ້ແກ່ສາວົກຂອງສາດສະດາອື່ນບໍ່ມີຜົນຫຼາຍ ແຕ່ພຣະຜູ້ມີພຣະພາກເຈົ້າກັບຊົງຊັກຊວນໃຫ້ຂ້າພຣະອົງໃຫ້ທານແກ່ພວກນີຄົນ ຂ້າພຣະອົງຈະຮູ້ເວລາໃນເລື້ອງນີ້ເອງ ພຣະອົງຜູ້ຈະເລີນ ແມ່ນເທື່ອທີ ໓ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າ ພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າ ເປັນອຸປາສົກຜູ້ເຂົ້າເຖິງສະຣະນະ ຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຕັດອະນຸປຸບພີກະຖາ ຄື ຊົງປະກາດ

໑. ທານະກະຖາ
໒. ສີລະກະຖາ
໓. ສັກຄະກະຖາ
໔. ກາມາທີນະວະກະຖາ
໕. ເນກຂຳມານີສັງສະກະຖາ ແກ່ສີຫະເສນາບໍດີ

ເມື່ອຊົງຊາບວ່າສີຫະເສນາບໍດີມີຈິດຄວນ ອ່ອນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສີກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີປາສະຈາກມົນທິນໄດ້ເກີດຂຶ້ນແກ່ສີຫະເສນາບໍດີນັ້ນ ທີ່ອາສະນະນັ້ນແລວ່າ “ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ” ປຽບຄືຜ້າຂາວສະອາດປາສະຈາກມົນທິນຄວນຮັບນ້ຳຍ້ອມ ໄດ້ເປັນຢ່າງດີ

ຄັ້ງນັ້ນ ສີຫະເສນາບໍດີໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອໃຜອີກ ໃນຄຳສອນຂອງພຣະສາດສະດາ ຈຶ່ງຂາບທູນວ່າ “ຂໍພຣະຜູ້ມີພຣະພາກເຈົ້າພ້ອມພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນ ຂ້ານ້ອຍ”

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ສີຫະເສນາບໍດີນັ້ນຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈຶ່ງໄດ້ລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວກັບໄປ

[໘໗໘] ຄັ້ງນັ້ນ ສີຫະເສນາບໍດີໃຊ້ມະຫາດນ້ອຍຜູ້ໜຶ່ງວ່າ “ທ່ານໄປຫາຊື້ຊີ້ນສົດທີ່ມີຂາຍມາ” ໂດຍລ່ວງໄປແຫ່ງຣາຕີນັ້ນໄດ້ຈັດກຽມຂອງຫຍ້ຳຂອງສັນອັນປະນີດແລ້ວໃຫ້ມະຫາດນ້ອຍໄປຂາບທູນພັດຕະການພຣະຜູ້ມີພຣະພາກເຈົ້າວ່າ “ເຖິງເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ”

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກແລ້ວ ຊົງຖືບາດແລະຈີວອນ ສະເດັດໄປທີ່ນິເວດຂອງສີຫະເສນາບໍດີ ປະທັບນັ່ງເທິງອາສະນະທີ່ຈັດຖວາຍພ້ອມກັບພິກຂຸສົງ

ສະໄໝນັ້ນ ພວກນິຄົນຈຳນວນຫຼາຍພາກັນກອດແຂນຮ່ຳໄຮໄປຕາມຖະໜົນສີ່ແຍກສາມແຍກທົ່ວນະຄອນເວສາລີວ່າ “ມື້ນີ້ ສີຫະເສນາບໍດີຂ້າສັດລ້ຽງໂຕອ້ວນ ໆ ເຮັດອາຫານລ້ຽງພຣະສະມະນະໂຄດົມ ພຣະສະມະນະໂຄດົມທັງທີ່ຮູ້ຢູ່ກໍຍັງສັນຊີ້ນທີ່ເຂົາເຮັດເຈາະຈົງຕົນເອງ”

ຄັ້ງນັ້ນ ມະຫາດນ້ອຍຜູ້ໜຶ່ງເຂົ້າໄປຫາສີຫະເສນາບໍດີ ກ່າວວ່າ “ຫົວໜ້າເພິ່ງຮູ້ເທີ້ນ ພວກນິຄົນຈຳນວນຫຼາຍພາກັນກອດແຂນຮ່ຳໄຮໄປຕາມຖະໜົນສີ່ແຍກສາມແຍກທົ່ວນະຄອນເວສາລີ

ວ່າ ມື້ນີ້ ສີຫະເສນາບໍດີຂ້າສັດລ້ຽງໂຕອ້ວນ ໆ ເຮັດອາຫານລ້ຽງພຣະສະມະນະໂຄດົມ ພຣະສະມະນະໂຄດົມທັງທີ່ຮູ້ຢູ່ກໍຍັງສັນຊີ້ນທີ່ເຂົາເຮັດເຈາະຈົງຕົນເອງ"

ສີຫະເສນາບໍດີຕອບວ່າ "ຊ່າງເທີ້ນ ທ່ານເຫຼົ່ານັ້ນປະສົງຈະຕຳໜິພຣະພຸດ ປະສົງຈະຕຳໜິພຣະທຳ ປະສົງຈະຕຳໜິພຣະສົງມາດົນແລ້ວ ອັນໜຶ່ງ ທ່ານເຫຼົ່ານັ້ນກ່າວຕູ່ ພຣະຜູ້ມີພຣະພາກເຈົ້າດ້ວຍເລື້ອງທີ່ບໍ່ມີຢູ່ ເປົ່າປະໂຫຍດ ເປັນເລື້ອງຕົວະ ບໍ່ເປັນຈິງ ສ່ວນ ພວກເຮົາບໍ່ຈົງໃຈຂ້າສັດແມ່ນຍ້ອນເຫດແຫ່ງຊີວິດ"

ລຳດັບນັ້ນ ສີຫະເສນາບໍດີ ໄດ້ນຳຂອງຫຍ້ຳຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດ ຊົງຫ້າມພັດຕາຫານແລ້ວຊົງລະພຣະຫັດຈາກບາດ ຈຶ່ງໄດ້ນັ່ງເຝົ້າຢູ່ທີ່ສົມຄວນ

## ເລື້ອງຊົງຫ້າມສັນຊີ້ນທີ່ເຂົາເຮັດເຈາະຈົງ

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ສີຫະເສນາບໍດີເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍພິກຂຸຮູ້ຢູ່ ບໍ່ເພິ່ງສັນຊີ້ນທີ່ເຂົາເຮັດເຈາະຈົງ ອົງໃດສັນ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດປາ ຊີ້ນ ເປັນຂອງບໍລິສຸດດ້ວຍອາການ ໓ ຢ່າງຄື

໑. ບໍ່ໄດ້ເຫັນ
໒. ບໍ່ໄດ້ຍິນ
໓. ບໍ່ໄດ້ນຶກສົງໄສ

## ໑໗໘. ກັບປີຍະພູມິອະນຸຊານະນາ

## ວ່າດ້ວຍການຊົງອະນຸຍາດກັບປີຍະພູມ

## ເລື້ອງນະຄອນເວສາລີຫາອາຫານໄດ້ງ່າຍ

[໒໘໕] ສະໄໝນັ້ນ ນະຄອນເວສາລີມີພິກສາຫານຫຼາຍ ມີເຂົ້າກ້າງອກງາມ ບິນທະບາດຫາໄດ້ງ່າຍ ພຣະອະຣິຍະບິນທະບາດເປັນຢູ່ໄດ້ງ່າຍ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຫຼີບຫຼີກຢູ່ໃນບ່ອນສະງັດ ໄດ້ມີພຣະດຳຣິດັ່ງນີ້ວ່າ "ອາຫານທີ່ເຮົາອະນຸຍາດແກ່ພິກຂຸເມື່ອເວລາອັດຕະຄັດອາຫານ ມີເຂົ້າກ້າບົ່ງອກງາມ ບິນທະບາດຫາໄດ້ລຳບາກ ຄື ອາຫານທີ່ເກັບໄວ້ພາຍໃນ ທີ່ຫຸງຕົ້ມພາຍໃນ ທີ່ຫຸງຕົ້ມເອງ ທີ່ຈັບຕ້ອງແລ້ວຮັບປະເຄນໃໝ່ ທີ່ນຳມາຈາກທີ່ນິມົນ ທີ່ຮັບປະເຄນກ່ອນເວລາພັດຕາຫານ ທີ່ເກີດໃນປ່າ ທີ່ເກີດໃນກໍບົວ[໑] ທຸກມື້ນີ້ພິກຂຸຍັງສັນພັດຕາຫານນັ້ນຢູ່ບໍ່ນໍ"

ເມື່ອເວລາຄ່ຳຈຶ່ງສະເດັດອອກຈາກບ່ອນຫຼີບຫຼີກ ຕັດຮຽກທ່ານພຣະອານົນມາຖາມວ່າ "ອານົນ ອາຫານທີ່ເຮົາອະນຸຍາດແກ່ພິກຂຸເມື່ອເວລາອັດຕະຄັດອາຫານ ມີເຂົ້າກ້ານ້ອຍ ບິນທະບາດໄດ້ລຳບາກ ຄື ອາຫານທີ່ເກັບໄວ້ພາຍໃນ ທີ່ຫຸງຕົ້ມພາຍໃນ ທີ່ຫຸງຕົ້ມເອງ ທີ່ຈັບຕ້ອງແລ້ວຮັບປະເຄນໃໝ່ ທີ່ນຳມາຈາກທີ່ນິມົນ ທີ່ຮັບປະເຄນກ່ອນເວລາອາຫານທີ່ເກີດໃນປ່າແລະທີ່ເກີດໃນກໍບົວ ທຸກມື້ນີ້ພິກຂຸຍັງສັນອາຫານເຫຼົ່ານັ້ນຢູ່ບໍ່ນໍ"

## ເລື້ອງຊົງຫ້າມອາຫານທີ່ຫຸງຕົ້ມພາຍໃນເປັນຕົ້ນ

ທ່ານພຣະອານົນຂາບທູນວ່າ "ພິກຂຸຍັງສັນຢູ່ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາຫ້າມອາຫານເຫຼົ່ານັ້ນຕັ້ງແຕ່ມື້ນີ້ເປັນຕົ້ນໄປເຊິ່ງເປັນສິ່ງທີ່ເຮົາອະນຸຍາດແກ່ພິກຂຸເມື່ອເວລາອັດຕະຄັດອາຫານ ມີເຂົ້າກ້າບົ່ງອກງາມ ບິນທະບາດຫາໄດ້ລຳບາກ ຄື ອາຫານທີ່ເກັບໄວ້ພາຍໃນ ທີ່ຫຸງຕົ້ມພາຍໃນ ທີ່ຫຸງຕົ້ມເອງ ທີ່ຈັບຕ້ອງແລ້ວຮັບປະເຄນໃໝ່ ທີ່ນຳມາຈາກທີ່ນິມົນ ທີ່ຮັບປະເຄນກ່ອນເວລາພັດຕາຫານ ທີ່ເກີດໃນປ່າ ທີ່ເກີດໃນກໍບົວ ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສັນອາຫານທີ່ເກັບໄວ້ພາຍໃນ ທີ່ຫຸງຕົ້ມພາຍໃນ ທີ່ຫຸງຕົ້ມເອງ ທີ່ຈັບຕ້ອງແລ້ວຮັບປະເຄນໃໝ່ ອົງໃດສັນຕ້ອງອາບັດທຸກກົດ

ພິກຂຸທັງຫຼາຍ ພິກຂຸທີ່ສັນແລ້ວ ບອກຫ້າມພັດຕາຫານແລ້ວ ບໍ່ເພິ່ງສັນອາຫານທີ່ນຳມາຈາກທີ່ນິມົນ ທີ່ຮັບປະເຄນກ່ອນເວລາພັດຕາຫານ ທີ່ເກີດໃນປ່າ ທີ່ເກີດໃນກໍບົວ ເຊິ່ງເປັນອາຫານທີ່ບໍ່ເປັນເດື່ອນ ອົງໃດສັນ ເພິ່ງປັບອາບັດຕາມທຳ"[໑]

## ເລື້ອງຝົນຕັ້ງເຄົ້າ

ສະໄໝນັ້ນ ຄົນທັງຫຼາຍໃນຊົນນະບົດບັນທຸກເກືອແດ່ ນ້ຳມັນແດ່ ເຂົ້າສານແດ່ ຂອງສັນແດ່ຫຼວງຫຼາຍໄວ້ໃນກວຽນແລ້ວຕັ້ງວົງລ້ອມກວຽນຢູ່ນອກຊຸ້ມປະຕູພຣະວິຫານຄອຍຖ້າວ່າ "ພວກເຮົາຈະເຮັດພັດຕາຫານຖວາຍເມື່ອໄດ້ໂອກາດ"

ກໍກ້ອນເຟື້ອຝືນໃຫຍ່ຕັ້ງເຄົ້າຂຶ້ນແລ້ວ ຄົນເຫຼົ່ານັ້ນພາກັນເຂົ້າໄປຫາທ່ານພຣະອານົນແລ້ວ ໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນ ຂໍໂອກາດເທີ້ນ ພວກຂ້ານ້ອຍບັນທຸກເກືອແດ່ ນໍ້າມັນແດ່ ເຂົ້າສານແດ່ ຂອງສົ້ມແດ່ ຫຼວງຫຼາຍໄວ້ໃນກວຽນແລ້ວຕັ້ງວົງລ້ອມກວຽນຢູ່ນອກຊຸ້ມ ປະຕູພຣະວິຫານນີ້ເອງ ກໍກ້ອນເຟື້ອຝືນໃຫຍ່ຕັ້ງເຄົ້າຂຶ້ນແລ້ວ ພວກຂ້ານ້ອຍຈະປະຕິບັດແນວ ໃດນໍ"

ລໍາດັບນັ້ນ ທ່ານພຣະອານົນໄດ້ນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ອານົນ ຖ້າເປັນແນວນັ້ນ ສົງຈົ່ງສົມມຸດວິຫານຢູ່ສຸດ ເຂດວັດໃຫ້ເປັນກັບປິຍະພູມ ແລ້ວໃຫ້ເກັບໄວ້ໃນສະຖານທີ່ທີ່ສົງມຸ້ງຫວັງ ຄື ໃນວິຫານ ເຮືອນມຸງ ແຖບດຽວ ຜາສາດ ເຮືອນໂລ້ນ ຫຼືຖໍ້າ"

## ວິທີສົມມຸດກັບປິຍະພູມແລະກໍາມະວາຈາສົມມຸດ

ພິກຂຸທັງຫຼາຍ ສົງເພິ່ງສົມມຸດກັບປິຍະພູມແນວນີ້ ຄື ພິກຂຸຜູ້ສະຫຼາດສາມາດເພິ່ງ ປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກໍາມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ເພິ່ງສົມມຸດວິຫານຊື່ນີ້ໃຫ້ ເປັນກັບປິຍະພູມ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງສົມມຸດວິຫານຊື່ນີ້ໃຫ້ເປັນກັບປິຍະພູມ ທ່ານ ອົງໃດເຫັນດ້ວຍກັບການສົມມຸດວິຫານຊື່ນີ້ໃຫ້ເປັນກັບປິຍະພູມ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ວິຫານຊື່ນີ້ ສົງສົມມຸດໃຫ້ເປັນກັບປິຍະພູມແລ້ວ ສົງເຫັນດ້ວຍ ຍ້ອນແນວນັ້ນຈຶ່ງນິ່ງ ຂ້າ ພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

ສະໄໝນັ້ນ ຊາວບ້ານຕົ້ມເຂົ້າຕົ້ມ ຫຸງເຂົ້າສຸກ ຕົ້ມແກງ ຟັກຊີ້ນ ຜ່າຟືນສົ່ງສຽງຟົດຟື້ນ ຢູ່ໃນກັບປິຍະພູມທີ່ສົງສົມມຸດແລ້ວ

ພຣະຜູ້ມີພຣະພາກເຈົ້າຊົງຕື່ນບັນທົມໃນເວລາເຊົ້າມືດ ໄດ້ຊົງສະດັບສຽງຟົດຟື້ນແລະສຽງ ກາຮ້ອງ ຈຶ່ງຕັດຖາມທ່ານພຣະອານົນວ່າ "ອານົນ ສຽງຟົດຟື້ນອັນໃດ"

ທ່ານພຣະອານົນ ໄດ້ຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

## ຊົງອະນຸຍາດກັບປີຍະພູມ ໓,໔ ຊະນິດ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ທີ່ອັນເປັນກັບປີຍະພູມເຊິ່ງສົງສົມມຸດໄວ້ ອົງໃດໃຊ້ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ເຮົາອະນຸຍາດກັບປີຍະພູມ ໓ ຊະນິດ ຄື

໑. ອຸດສາວະນັນຕິກາ (ກັບປີຍະພູມທີ່ປະກາດໃຫ້ຮູ້ກັນແຕ່ເລີ່ມສ້າງ)
໒. ໂຄນິສາທິກາ (ກັບປີຍະພູມເຄື່ອນທີ່ໄດ້)
໓. ຄະຫະປະຕິກາ (ເຮືອນຂອງຄະຫະບໍດີທີ່ເຂົາຖວາຍໃຫ້ເປັນກັບປີຍະພູມ)

## ເລື້ອງພຣະຍະໂສຊະເປັນໄຂ້

ສະໄໝນັ້ນ ທ່ານພຣະຍະໂສຊະເປັນໄຂ້ ຄົນທັງຫຼາຍນຳເພສັດມາຖວາຍທ່ານ ພິກຂຸທັງຫຼາຍໃຫ້ເກັບເພສັດເຫຼົ່ານັ້ນໄວ້ຂ້າງນອກຈຶ່ງຖືກສັດກິນແດ່ ຖືກລັກໄປແດ່

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຊ້ກັບປີຍະພູມທີ່ສົງສົມມຸດ ພິກຂຸທັງຫຼາຍ ເຮົາອະນຸຍາດກັບປີຍະພູມ ໔ ຊະນິດ ຄື໑

໑. ອຸດສາວະນັນຕິກາ (ກັບປີຍະພູມທີ່ປະກາດໃຫ້ຮູ້ກັນແຕ່ເລີ່ມສ້າງ)
໒. ໂຄນິສາທິກາ (ກັບປີຍະພູມເຄື່ອນທີ່ໄດ້)
໓. ຄະຫະປະຕິກາ (ເຮືອນຄະຫະບໍດີທີ່ເຂົາຖວາຍໃຫ້ເປັນກັບປີຍະພູມ)
໔. ສຳມະຕິກາ (ກັບປີຍະພູມທີ່ສົງສົມມຸດ)"

**ສີຫະພານະວາຣະທີ ໔ ຈົບ**

# ໑໗໐. ເມນທະກະຄະຫະປະຕິວັດຖຸ

## ວ່າດ້ວຍເມນທະກະຄະຫະບໍດີຖວາຍປັນຈະໂຄຣົດກັບສະບຽງເດີນທາງ

[໔໘໖] ສະໄໝນັ້ນ ເມນທະກະຄະຫະບໍດີຢູ່ໃນເມືອງພັດທິຍະ ທ່ານມີລິດທານຸພາບແນວນີ້ ຄື ສະຫົວແລ້ວໃຫ້ກວາດເລົ້າເຂົ້າ ນັ່ງຢູ່ນອກປະຕູ ສາຍເຂົ້າເປືອກໄຫຼຕົກຈາກອາກາດເຕັມສາງ

ພັນລະຍາຂອງທ່ານມີລິດທານຸພາບແນວນີ້ ຄື ນັ່ງໃກ້ຖາດເຂົ້າສຸກຂະໜາດບັນຈຸນ້ຳໄດ້ ໑ ອາລະຫະກະໃບດຽວທີ່ນັ້ນ ແລະໝໍ້ແກງ ໑ ໝໍ້ ມີພັດຕາຫານລ້ຽງແກ່ຂ້າທາດແລະກຳມະກອນໄດ້ ພັດຕາຫານນັ້ນຍ່ອມບໍ່ໝົດສິ້ນໄປຕະຫຼອດເວລາທີ່ນາງຍັງບໍ່ລຸກຂຶ້ນ

ບຸດຂອງທ່ານມີລິດທານຸພາບແນວນີ້ ຄື ຖືຖົງບັນຈຸຊັບ ໑ ພັນພຽງຖົງດຽວແລ້ວ ແຈກຄ່າຈ້າງກາງປີແກ່ຂ້າທາດແລະກຳມະກອນ ຊັບຄ່າຈ້າງນັ້ນບໍ່ໝົດສິ້ນໄປຕະຫຼອດເວລາທີ່ຖົງເງິນຍັງຢູ່ໃນມື ຂອງເຂົາ

ສະໃພ້ຂອງທ່ານມີລິດທານຸພາບແນວນີ້ ຄື ນັ່ງໃກ້ກະບຸງທີ່ໃສ່ເຂົ້າ ໔ ໂອພຽງໃບດຽວແລ້ວແຈກພັດຕາຫານກາງປີແກ່ຂ້າທາດແລະກຳມະກອນ ພັດຕາຫານບໍ່ໝົດສິ້ນໄປຕະຫຼອດເວລາທີ່ນາງຍັງບໍ່ລຸກຂຶ້ນ

ຂ້າທາດຂອງທ່ານມີລິດທານຸພາບແນວນີ້ ຄື ເມື່ອເຂົາໄຖນາດ້ວຍໄຖຄັນດຽວ ມີຮອຍໄຖເຖິງ ໗ ຮອຍ

ພຣະເຈົ້າພິມພິສານຈອມທັບມະຄົດຣັດໄດ້ຊົງສະດັບຂ່າວວ່າ "ເມນທະກະຄະຫະບໍດີຢູ່ໃນເມືອງພັດທິຍະ ເຂົາມີລິດທານຸພາບແນວນີ້ ຄື ສະຫົວແລ້ວໃຫ້ກວາດເລົ້າເຂົ້າ ນັ່ງຢູ່ນອກປະຕູສາຍເຂົ້າເປືອກໄຫຼຕົກຈາກອາກາດເຕັມສາງ

ພັນລະຍາຂອງເຂົາມີລິດທານຸພາບແນວນີ້ ຄື ນັ່ງໃກ້ຖາດເຂົ້າສຸກຂະໜາດບັນຈຸນ້ຳໄດ້ ໑ ອາລະຫະກະໃບດຽວທີ່ນັ້ນ ແລະໝໍ້ແກງ ໑ ໝໍ້ ມີພັດຕາຫານລ້ຽງແກ່ຂ້າທາດແລະກຳມະກອນໄດ້ ພັດຕາຫານນັ້ນຍ່ອມບໍ່ໝົດສິ້ນໄປຕະຫຼອດເວລາທີ່ນາງຍັງບໍ່ລຸກຂຶ້ນ

ບຸດຂອງເຂົາມີລິດທານຸພາບແນວນີ້ ຄື ຖືຖົງບັນຈຸຊັບ ໑ ພັນພຽງຖົງດຽວແລ້ວແຈກຄ່າຈ້າງກາງປີແກ່ຂ້າທາດແລະກຳມະກອນ ຊັບຄ່າຈ້າງນັ້ນບໍ່ໝົດສິ້ນໄປຕະຫຼອດເວລາ ທີ່ຖົງເງິນຍັງຢູ່ໃນມືຂອງເຂົາ

ສະໃພ້ຂອງເຂົາມີລິດທານຸພາບແນວນີ້ ຄື ນັ່ງໃກ້ກະບຸງທີ່ໃສ່ເຂົ້າ ໔ ໂອພຽງໃບດຽວແລ້ວແຈກພັດຕາຫານກາງປີແກ່ຂ້າທາດແລະກຳມະກອນ ພັດຕາຫານນັ້ນບໍ່ໝົດສິ້ນໄປຕະຫຼອດເວລາທີ່ນາງຍັງບໍ່ລຸກຂຶ້ນ

ຂ້າທາດຂອງເຂົາມີລິດທານຸພາບແນວນີ້ ຄື ເມື່ອເຂົາໄຖນາດ້ວຍໄຖຄັນດຽວ ມີຮອຍໄຖເຖິງ ໗ ຮອຍ

ລຳດັບນັ້ນ ພຣະເຈົ້າພິມພິສານຈອມທັບມະຄົດຣັດ ຕັດຣຽກມະຫາອຳໝາດຜູ້ສຳເລັດຣາຊະກິດມາຮັບສັ່ງວ່າ "ທ່ານ ເມນທະກະຄະຫະບໍດີອາໄສຢູ່ໃນແວ່ນແຄວ້ນຂອງເຮົາ ເຂົາມີລິດທາ

ນຸພາບແນວນີ້ ຄື ສະຫົວແລ້ວໃຫ້ກວາດເລົ້າເຂົ້າ ນັ່ງຢູ່ນອກປະຕູ ສາຍເຂົ້າເປືອກໄຫຼ ຕົກຈາກອາກາດເຕັມສາງ

ພັນລະຍາຂອງເຂົາ ๆລๆ ບຸດຂອງເຂົາ ๆລๆ ສະໃພ້ຂອງເຂົາ ๆລๆ ຂ້າທາດຂອງເຂົາ ມີລິດທານຸພາບແນວນີ້ ຄື ເມື່ອເຂົາໄຖນາດ້ວຍໄຖຄັນດຽວ ມີຮອຍໄຖເຖິງ ໗ ຮອຍ ທ່ານ ທ່ານຈົ່ງໄປສືບເບິ່ງໃຫ້ຮູ້ເຫັນຄືກັບທີ່ເຮົາເຫັນດ້ວຍຕົນເອງ"

[໔໗] ມະຫາອຳໝາດຮັບສະໜອງພຣະຣາຊະດຳຣັດແລ້ວ ອອກເດີນທາງພ້ອມດ້ວຍເສນາ ໔ ເຫຼົ່າໄປສູ່ເມືອງພັດທິຍະ ເຂົ້າໄປຫາເມນທະກະຄະຫະບໍດີເຖິງທີ່ພຳນັກ ເມື່ອເຖິງແລ້ວໄດ້ກ່າວກັບເມນທະກະຄະຫະບໍດີດັ່ງນີ້ວ່າ "ຄະຫະບໍດີ ພຣະຣາຊາຮັບສັ່ງຂ້າພະເຈົ້າມາວ່າ ໄດ້ຂ່າວວ່າເມນທະກະຄະຫະບໍດີອາໄສຢູ່ໃນແວ່ນແຄວ້ນຂອງເຮົາ ເຂົາມີລິດທານຸພາບແນວນີ້ ຄື ສະຫົວແລ້ວໃຫ້ ກວາດເລົ້າເຂົ້າ ນັ່ງຢູ່ນອກປະຕູ ສາຍເຂົ້າເປືອກໄຫຼຕົກຈາກອາກາດເຕັມສາງ ພັນລະຍາ ຂອງເຂົາ ๆລๆ ບຸດຂອງເຂົາ ๆລๆ ສະໃພ້ຂອງເຂົາ ๆລๆ ຂ້າທາດຂອງເຂົາ ມີລິດທານຸພາບ ແນວນີ້ ຄື ເມື່ອເຂົາໄຖນາດ້ວຍໄຖຄັນດຽວ ມີຮອຍໄຖເຖິງ ໗ ຮອຍ ທ່ານ ທ່ານຈົ່ງໄປສືບເບິ່ງໃຫ້ຮູ້ເຫັນຄືກັບທີ່ເຮົາເຫັນດ້ວຍຕົນເອງ ຄະຫະບໍດີ ພວກເຮົາມາເບິ່ງລິດທານຸພາບຂອງທ່ານ"

ລຳດັບນັ້ນ ເມນທະກະຄະຫະບໍດີສະຫົວແລ້ວໃຫ້ກວາດເລົ້າເຂົ້ານັ່ງຢູ່ນອກປະຕູ ສາຍເຂົ້າເປືອກໄຫຼຕົກຈາກອາກາດເຕັມສາງ

ມະຫາອຳໝາດກ່າວວ່າ "ຂ້າພະເຈົ້າເຫັນລິດທານຸພາບຂອງທ່ານແລ້ວ ຂໍຊົມລິດທານຸພາບຂອງພັນລະຍາທ່ານ"

ລຳດັບນັ້ນ ເມນທະກະຄະຫະບໍດີສັ່ງພັນລະຍາວ່າ "ຖ້າເປັນແນວນັ້ນ ນາງຈົ່ງລ້ຽງອາຫານແກ່ເສນາ ທັງ ໔ ເຫຼົ່າ"

ພັນລະຍາຂອງທ່ານນັ່ງໃກ້ຖາດເຂົ້າສຸກຂະໜາດບັນຈຸນ້ຳໄດ້ ໑ ອາລະຫະກະໃບດຽວທີ່ນັ້ນ ແລະໝໍ້ແກງອີກ ໑ ໝໍ້ ມີພັດຕາຫານລ້ຽງແກ່ເສນາທັງ ໔ ເຫຼົ່າ ພັດຕາຫານນັ້ນບໍ່ໝົດສິ້ນໄປຕະຫຼອດເວລາທີ່ນາງຍັງບໍ່ລຸກຂຶ້ນ

ມະຫາອຳໝາດກ່າວວ່າ "ຂ້າພະເຈົ້າເຫັນລິດທານຸພາບຂອງພັນລະຍາທ່ານແລ້ວ ຂໍຊົມລິດທານຸພາບຂອງບຸດທ່ານ"

ລຳດັບນັ້ນ ເມນທະກະຄະຫະບໍດີສັ່ງບຸດວ່າ "ຖ້າເປັນແນວນັ້ນ ເຈົ້າຈົ່ງແຈກຄ່າຈ້າງກາງປີແກ່ເສນາທັງ ໔ ເຫຼົ່າ"

ບຸດຂອງເມນທະກະຄະຫະບໍດີຖືຖົງບັນຈຸຊັບ ໑ ພັນພຽງຖົງດຽວ ແລ້ວແຈກຄ່າຈ້າງກາງປີແກ່ເສນາທັງ ໔ ເຫຼົ່າ ຊັບຄ່າຈ້າງນັ້ນບໍ່ໝົດສິ້ນໄປຕະຫຼອດເວລາທີ່ຖົງເງິນຍັງຢູ່ໃນມືຂອງເຂົາ

ມະຫາອໍາໝາດກ່າວວ່າ "ຂ້າພະເຈົ້າເຫັນລິດທານຸພາບຂອງບຸດທ່ານແລ້ວ ຂໍຊົມລິດທານຸພາບຂອງສະໃພ້ທ່ານ"

ລໍາດັບນັ້ນ ເມນທະກະຄະຫະບໍດີສັ່ງສະໃພ້ວ່າ "ຖ້າເປັນແນວນັ້ນ ເຈົ້າຈົ່ງແຈກພັດຕາຫານກາງປີແກ່ເສນາທັງ ໔ ເຫຼົ່າ"

ສະໃພ້ຂອງເມນທະກະຄະຫະບໍດີນັ່ງໃກ້ກະບຸງທີ່ໃສ່ເຂົ້າໄດ້ ໔ ໂອພຽງໃບດຽວ ແລ້ວແຈກພັດຕາຫານກາງປີແກ່ເສນາທັງ ໔ ເຫຼົ່າ ພັດຕາຫານນັ້ນບໍ່ໝົດສິ້ນໄປຕະຫຼອດເວລາ ທີ່ນາງຍັງບໍ່ລຸກຂຶ້ນ

ມະຫາອໍາໝາດກ່າວວ່າ "ຂ້າພະເຈົ້າເຫັນລິດທານຸພາບຂອງສະໃພ້ທ່ານແລ້ວ ຂໍຊົມລິດທານຸພາບຂອງຂ້າທາດທ່ານ"

ທ່ານເມນທະກະຄະຫະບໍດີກ່າວວ່າ "ທ່ານມະຫາອໍາໝາດ ທ່ານຕ້ອງໄປຊົມລິດທານຸພາບຂອງຂ້າທາດຂ້າພະເຈົ້າ ທີ່ນາ ຂ້ານ້ອຍ"

ມະຫາອໍາໝາດກ່າວວ່າ "ບໍ່ຕ້ອງລະ ຂ້າພະເຈົ້າໄດ້ເຫັນລິດທານຸພາບຂອງຂ້າທາດທ່ານແລ້ວ" ເມື່ອສໍາເລັດລາຊະການນັ້ນ ມະຫາອໍາໝາດຈຶ່ງເດີນທາງກັບເຖິງນະຄອນຣາດຊະຄຶພ້ອມກັບເສນາ ໔ ເຫຼົ່າ ໄດ້ເຂົ້າໄປເຝົ້າພຣະເຈົ້າພິມພິສານຈອມທັບມະຄົດຣັດຮອດບ່ອນຢູ່ ເມື່ອເຖິງແລ້ວຂາບທູນເລື້ອງນີ້ຊົງຮັບຮູ້

[໔໙໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນະຄອນເວສາລີຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງເມືອງພັດທິຍະພ້ອມກັບພິກຂຸສົງໝູ່ໃຫຍ່ ໑,໔໕໐ ອົງ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລໍາດັບ ຈົນເຖິງເມືອງພັດທິຍະ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ປ່າຊາຕິຍາວັນ ໃນເມືອງພັດທິຍະນັ້ນ

ເມນທະກະຄະຫະບໍດີໄດ້ຟັງຂ່າວວ່າ "ທ່ານພຣະສະມະນະໂຄດົມຜູ້ສາກະຍະບຸດສະເດັດອອກບວດ ຈາກສາກະຍະຕະກູນ ສະເດັດເຖິງເມືອງພັດທິຍະ ປະທັບຢູ່ປ່າຊາຕິຍາວັນທ່ານພຣະໂຄດົມ ຜູ້ຈະເລີນນັ້ນ ມີກິດຕິສັບອັນງາມຊ່າລືໄປແນວນີ້ວ່າ "ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາ ແລະຈະຣະນະ ສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນ

ພຣະຜູ້ມີພຣະພາກເຈົ້າ"[๑] ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມມະໂລກ ແລະໝູ່ສັດພ້ອມທັງສະມະນະພາມເທວະດາແລະມະນຸດດ້ວຍພຣະອົງເອງແລ້ວ ຈຶ່ງຊົງປະກາດໃຫ້ຜູ້ອື່ນຮູ້ຕາມຊົງສະແດງທຳ ມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງແລະມີຄວາມງາມໃນບ່ອນສຸດ ຊົງປະກາດພົມມະຈັນ ພ້ອມທັງອັດຖະ ແລະ ພະຍັນຊະນະບໍລິສຸດ ບໍລິບູນຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແບບນີ້ ເປັນຄວາມດີຢ່າງແທ້ຈິງ"

ຄັ້ງນັ້ນ ເມນທະກະຄະຫະບໍດີ ໃຫ້ຈັດແຈງຍານພາຫະນະຄັນງາມ ຂຶ້ນຍານພາຫະນະຄັນງາມ ມີຍານພາຫະນະຄັນງາມຫຼາຍຄັນ ເດີນທາງອອກຈາກເມືອງພັດທິຍະ ເພື່ອເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ

ເດຍຣະຖີຈຳນວນຫຼາ ຍເຫັນເມນທະກະຄະຫະບໍດີມາແຕ່ໄກ ຈຶ່ງໄດ້ກ່າວກັບເມນທະກະຄະຫະບໍດີ ດັ່ງນີ້ວ່າ "ຄະຫະບໍດີ ທ່ານຈະໄປໃສ"

ເມນທະກະຄະຫະບໍດີກ່າວວ່າ "ຈະໄປເຝົ້າພຣະສະມະນະໂຄດົມ ຂ້ານ້ອຍ"

ພວກເດຍຣະຖີກ່າວວ່າ "ທ່ານເປັນພວກສອນໃຫ້ເຮັດ ເປັນຫຍັງຈຶ່ງຈະໄປຫາພຣະສະມະນະໂຄດົມ ຜູ້ສອນບໍ່ໃຫ້ເຮັດນໍ ຍ້ອນພຣະສະມະນະໂຄດົມ ເປັນຜູ້ສອນບໍ່ໃຫ້ເຮັດ ສະແດງທຳເພື່ອການບໍ່ໃຫ້ເຮັດ ທັງແນະນຳພວກສາວົກຕາມແບບນັ້ນ"

ຄັ້ງນັ້ນ ເມນທະກະຄະຫະບໍດີໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຈະຕ້ອງເປັນພຣະອະຣະຫັນຕະສຳມາສຳພຸດທະເຈົ້າແນ່ ດັ່ງນັ້ນພວກເດຍຣະຖີຈຶ່ງພາກັນຣິດສະຫຍາ" ແລ້ວອອກເດີນທາງໄປດ້ວຍຍານຕະຫຼອດພື້ນທີ່ທີ່ຍານພາຫະນະຈະໄປໄດ້ ແລ້ວລົງຍ່າງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງເຝົ້າຢູ່ທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຊົງຕັດອະນຸປຸບພິກະຖາ ຄື ຊົງປະກາດ

໑. ທານະກະຖາ
໒. ສີລະກະຖາ
໓. ສັກຄະກະຖາ
໔. ກາມາທີນະວະກະຖາ
໕. ເນກຂຳມານີສັງສະກະຖາ ແກ່ເມນທະກະຄະຫະບໍດີ ຜູ້ນັ່ງຢູ່ທີ່ສົມຄວນ

ເມື່ອຊົງຊາບວ່າເມນທະກະຄະຫະບໍດີນັ້ນມີຈິດຄວນ ອ່ອນ ປາສະຈາກນິວອນ ເບີກບານຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດແກ່ເມນທະກະຄະຫະບໍດີນັ້ນ ທີ່ ອາສະນະນັ້ນແລວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງ

ປວງຍ່ອມມີຄວາມດັບໄປເປັນທຳມະດາ" ປຽບຄືຜ້າຂາວສະອາດປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ຄັ້ງນັ້ນ ເມນທະກະຄະຫະບໍດີໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອໃຜອີກໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນນ່ວນຫຼາຍ ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນນ່ວນຫຼາຍ ພຣະອົງຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຜູ້ຫຼົງທາງຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກເຫັນຮູບ ພຣະອົງຜູ້ຈະເລີນ ຂ້າພຣະອົງນີ້ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຂົ້າເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ ແລະຂໍພຣະຜູ້ມີພຣະພາກເຈົ້າພ້ອມກັບພິກຂຸສົງຈົ່ງຮັບພັດຕາຫານຂອງຂ້າພຣະອົງເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ຄັ້ງນັ້ນ ເມນທະກະຄະຫະບໍດີຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ໄດ້ລຸກຈາກອາສະນະຖວາຍບັງຄົມ ກະທຳປະທັກຂິນແລ້ວກັບໄປ ໂດຍລ່ວງໄປແຫ່ງຣາຕີນັ້ນໄດ້ຈັດກຽມຂອງຫຍ້ຳຂອງສັນອັນປະນີດແລ້ວໃຫ້ເຈົ້າໜ້າທີ່ ໄປຂາບທູນພັດຕະການພຣະຜູ້ມີພຣະພາກເຈົ້າວ່າ "ເຖິງເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ"

ເມື່ອເວລາເຊົ້າພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກແລ້ວ ຊົງຖືບາດແລະຈີວອນສະເດັດ ໄປທີ່ນິເວດຂອງເມນທະກະຄະຫະບໍດີ ປະທັບນັ່ງເທິງອາສະນະທີ່ຈັດຖວາຍພ້ອມກັບພິກຂຸສົງ

ຄັ້ງນັ້ນພັນລະຍາ ບຸດ ສະໃພ້ ແລະຂ້າທາດຂອງຄະຫະບໍດີໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້ານັ່ງຢູ່ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຕັດອະນຸປຸບພິກະຖາ ຄື ຊົງປະກາດ

໑. ທານະກະຖາ

໒. ສີລະກະຖາ

໓. ສັກຄະກະຖາ

໔. ການາທີນະວະກະຖາ

໕. ເນກຂຳມານິສັງສະກະຖາ ແກ່ຄົນເຫຼົ່ານັ້ນ

ເມື່ອຊົງຊາບວ່າຄົນເຫຼົ່ານັ້ນມີຈິດຄວນ ອ່ອນ ປາສະຈາກນິວອນ ເບີກບານ ຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກ ສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດແກ່ຄົນເຫຼົ່ານັ້ນ ທີ່

ອາສະນະນັ້ນແລວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນທັງປວງມີຄວາມດັບໄປເປັນທຳມະດາ" ປຽບຄືຜ້າຂາວສະອາດປາສະຈາກມົນທິນຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ຄັ້ງນັ້ນ ຊິນເຫຼົ່ານັ້ນໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ແກ່ກ້າ ບໍ່ຕ້ອງເຊື່ອໃຜອີກໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະອົງຜູ້ຈະເລີນພາສິດຂອງພຣະອົງຊັດເຈນມ່ວນຫຼາຍ ພຣະອົງຜູ້ຈະເລີນ ພາສິດຂອງພຣະອົງຊັດເຈນມ່ວນຫຼາຍພຣະອົງຊົງປະກາດທຳແຈ່ມແຈ້ງໂດຍປະການຕ່າງ ໆ ປຽບຄືຄົນຫງາຍຂອງທີ່ຂວ້ຳ ໄຂຂອງທີ່ອັດ ບອກທາງແກ່ຄົນຫຼົງທາງ ຫຼືເຍືອງໄຟໃນບ່ອນມືດດ້ວຍຕັ້ງໃຈວ່າ ຄົນມີຕາດີຈັກແນມເຫັນຮູບພຣະອົງຜູ້ຈະເລີນ ພວກຂ້າພຣະອົງ ຂໍເຖິງພຣະຜູ້ມີພຣະພາກເຈົ້າພ້ອມທັງພຣະທຳແລະພຣະສົງເປັນສະຣະນະ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຈຳຂ້າພຣະອົງວ່າເປັນອຸປາສົກຜູ້ເຂົ້າເຖິງສະຣະນະຕັ້ງແຕ່ມື້ນີ້ເປັນຕົ້ນໄປຈົນຕະຫຼອດຊີວິດ"

ລຳດັບນັ້ນ ເມນທະກະຄະຫະບໍດີໄດ້ນຳຂອງຫຍ້ຳຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວຊົງຫ້າມພັດຕາຫານແລ້ວ ລະພຣະຫັດຈາກບາດ ຈຶ່ງໄດ້ນັ່ງເຝົ້າຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຕະຫຼອດເວລາທີ່ພຣະອົງຍັງປະທັບຢູ່ໃນເມືອງພັດທິຍະ ຂ້າພຣະອົງຂໍຖວາຍພັດຕາຫານເປັນປະຈຳແກ່ພິກຂຸສົງມີພຣະພຸດທະເຈົ້າເປັນປະທານ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເມນທະກະຄະຫະບໍດີເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຊົງລຸກຈາກອາສະນະສະເດັດກັບ

## ໑໗໑. ປັນຈະໂຄຣະສາທິອະນຸຊານະນາ

## ວ່າດ້ວຍຊົງອະນຸຍາດປັນຈະໂຄຣົດເປັນຕົ້ນ

[໔໙] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເມືອງພັດທິຍະຕາມພຣະອັດທະຍາໄສແລ້ວ ບໍ່ຊົງບອກເມນທະກະຄະຫະບໍດີ ສະເດັດຈາຣິກໄປທາງອັງຄຸດຕະຣາປະ ພ້ອມກັບພິກຂຸສົງ ໝູ່ໃຫຍ່ຈຳນວນ ໑,໔໕໐ ອົງ

ເມນທະກະຄະຫະບໍດີໄດ້ຮູ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າສະເດັດໄປທີ່ອັງຄຸດຕະຣາປະພ້ອມກັບພິກຂຸສົງໝູ່ໃຫຍ່ຈຳນວນ ໑,໔໕໐ ອົງ" ລຳດັບນັ້ນ ຈຶ່ງສັ່ງຂ້າທາດແລະກຳມະກອນໄປວ່າ "ທ່ານທັງຫຼາຍ ຖ້າເປັນແນວນັ້ນ ພວກທ່ານຈົ່ງບັນທຸກເກືອແດ່ ນ້ຳມັນແດ່ ເຂົ້າສານແດ່

ຂອງສັນແດ່ ລົງໃນກວຽນໃຫ້ຫຼາຍ ໆ ພວກຄົນລ້ຽງງົວ ໑,໔໕໐ ຄົນ ຈົ່ງຕ້ອນງົວແມ່ ໑,໔໕໐ ໂຕ ມາດ້ວຍ ເຮົາຈະລ້ຽງພຣະສົງດ້ວຍນໍ້ານົມສົດຮີດໃໝ່ທີ່ຍັງອຸ່ນໃນບ່ອນທີ່ເຮົາໄດ້ເຝົ້າພຣະຜູ້ມີພຣະພາກເຈົ້າ"

ຄັ້ງນັ້ນ ເມນທະກະຄະຫະບໍດີຕາມໄປພົບພຣະຜູ້ມີພຣະພາກເຈົ້າລະຫວ່າງທາງກັນດານ ຈຶ່ງເຂົ້າໄປ ເຝົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວຢືນຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍພຣະຜູ້ມີພຣະພາກເຈົ້າພ້ອມກັບພິກຂຸສົງໂຜດຮັບພັດຕາຫານຂອງຂ້າພຣະອົງເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ຄັ້ງນັ້ນ ເມນທະກະຄະຫະບໍດີຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ໄດ້ລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທໍາປະທັກຂິນແລ້ວກັບໄປ ໂດຍລ່ວງໄປແຫ່ງຣາຕີນັ້ນເຂົາໃຫ້ຈັດກຽມໂພຊະນາຫານອັນປະນີດແລ້ວໃຫ້ຄົນໄປຂາບທູນພັດຕະການພຣະຜູ້ມີພຣະພາກເຈົ້າວ່າ "ເຖິງເວລາແລ້ວ ຂ້ານ້ອຍ ພັດຕາຫານສໍາເລັດແລ້ວ"

ເມື່ອເວລາເຊົ້າພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກແລ້ວ ຊົງຖືບາດ ແລະຈີວອນສະເດັດໄປທີ່ຈັດລ້ຽງຂອງຄະຫະບໍດີ ປະທັບນັ່ງເທິງອາສະນະທີ່ຈັດຖວາຍພ້ອມດ້ວຍພິກຂຸສົງ

ຄະຫະບໍດີສັ່ງຄົນລ້ຽງງົວ ໑,໔໕໐ ຄົນໄປວ່າ "ທ່ານທັງຫຼາຍ ພວກທ່ານຈົ່ງຊ່ອຍກັນຈັບງົວແມ່ນົມຄົນລະໂຕແລ້ວຢືນໃກ້ພິກຂຸອົງລະຄົນ ໆ ເຮົາຈະລ້ຽງພຣະດ້ວຍນົມສົດຮີດໃໝ່ທີ່ຍັງອຸ່ນ" ແລ້ວນໍາຂອງຫຍໍ້າຂອງສັນອັນປະນີດແລະນໍ້ານົມສົດທີ່ເພິ່ງຮີດດ້ວຍຕົນເອງປະເຄນພິກຂຸສົງມີພຣະພຸດທະເຈົ້າຊົງເປັນປະທານດ້ວຍຕົນເອງກະທັ່ງອີ່ມໜໍາ

ພິກຂຸທັງຫຼາຍຢໍາເກງຢູ່ຈຶ່ງບໍ່ຍອມຮັບປະເຄນນໍ້ານົມສົດ ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຈົ່ງຮັບປະເຄນສັນເທີ້ນ"

ຄັ້ງນັ້ນ ເມນທະກະຄະຫະບໍດີນໍາຂອງຫຍໍ້າຂອງສັນອັນປະນີດແລະນໍ້ານົມສົດທີ່ເພິ່ງຮີດດ້ວຍມືຕົນເອງ ປະເຄນພິກຂຸສົງມີພຣະພຸດທະເຈົ້າຊົງເປັນປະທານດ້ວຍຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສໍາເລັດ ແລ້ວຊົງຫ້າມພັດຕາຫານແລ້ວລະພຣະຫັດຈາກບາດ ຈຶ່ງໄດ້ນັ່ງເຝົ້າຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ໃນຫົນທາງກັນດານອັດຕະຄັດນໍ້າອັດຕະຄັດອາຫານ ພິກຂຸບໍ່ມີສະບຽງເດີນທາງໄປຕ້ອງລໍາບາກ ຂໍປະທານວະໂຣກາດເທີ້ນ ຂ້ານ້ອຍ ພຣະອົງຊົງອະນຸຍາດສະບຽງເດີນທາງແກ່ພິກຂຸດ້ວຍເທີ້ນ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເມນທະກະຄະຫະບໍດີເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຊົງລຸກຈາກອາສະນະສະເດັດກັບ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໂຄຣົດ ໕ ຊະນິດ ຄື ນົມສົດ ນົມສົ້ມ ນ້ຳມັນງົວ ເນີຍຂຸ້ນ ແລະເນີຍໃສ ພິກຂຸທັງຫຼາຍ ຫົນທາງກັນດານ ອັດຕະຄັດນ້ຳ ອັດຕະຄັດອາຫານມີຢູ່ ພິກຂຸບໍ່ມີສະບຽງເດີນທາງໄປ ຕ້ອງລຳບາກ ເຮົາອະນຸຍາດໃຫ້ສະແຫວງຫາສະບຽງໄດ້ ຄື ຜູ້ຕ້ອງການເຂົ້າສານເພິ່ງສະແຫວງຫາເຂົ້າສານ ຜູ້ຕ້ອງການຖົ່ວຂຽວເພິ່ງສະແຫວງຫາຖົ່ວຂຽວ ຜູ້ຕ້ອງການຖົ່ວຣາຊະມາດເພິ່ງສະແຫວງຫາຖົ່ວຣາຊະມາດ ຜູ້ຕ້ອງການເກືອເພິ່ງສະແຫວງຫາເກືອ ຜູ້ຕ້ອງການນ້ຳອ້ອຍປ່ຽງເພິ່ງສະແຫວງຫານ້ຳອ້ອຍປ່ຽງ ຜູ້ຕ້ອງການນ້ຳມັນເພິ່ງສະແຫວງຫານ້ຳມັນ ຜູ້ຕ້ອງການເນີຍໃສເພິ່ງສະແຫວງຫາເນີຍໃສ ພິກຂຸທັງຫຼາຍ ຄົນທັງຫຼາຍທີ່ສັດທາເຫຼື້ອມໃສ ມອບເງິນແລະຄຳໄວ້ແກ່ກັບປີຍະກາຣົກກ່າວວ່າ ສິ່ງໃດຄວນແກ່ພຣະຜູ້ເປັນເຈົ້າ ຈົ່ງຖວາຍສິ່ງນັ້ນ ຈາກກັບປີຍະພັນນີ້ ດັ່ງນີ້ກໍມີຢູ່ ພິກຂຸທັງຫຼາຍ ສິ່ງໃດຄວນຈາກກັບປີຍະພັນນັ້ນ ເຮົາອະນຸຍາດໃຫ້ຍິນດີສິ່ງນັ້ນໄດ້ ແຕ່ເຮົາບໍ່ໄດ້ກ່າວວ່າ "ພິກຂຸເພິ່ງຍິນດີແລະສະແຫວງຫາຄຳແລະເງິນ ບໍ່ວ່າກໍລະນີໃດ ໆ"

## ໑໗໔. ເກນີຍະຊະຕິລະວັດຖຸ

### ວ່າດ້ວຍເກນີຍະຊະດິນຖວາຍນ້ຳອັດຖະບານ

[໒໐໐] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລຳດັບ ຈົນເຖິງອາປະນະນິຄົມ ເກນີຍະຊະດິນໄດ້ຮູ້ຂ່າວວ່າ "ພຣະສະມະນະໂຄດົມຜູ້ສາກະຍະບຸດ ສະເດັດອອກບວດຈາກສາກະຍະຕະກູນ ສະເດັດເຖິງອາປະນະນິຄົມແລ້ວ ທ່ານພຣະໂຄດົມຜູ້ຈະເລີນນັ້ນ ມີກິດຕິສັບອັນງາມຂ່າລືໄປແນວນີ້ວ່າ ແມ່ນຍ້ອນເຫດນີ້ ພຣະຜູ້ມີພຣະພາກເຈົ້າພຣະອົງນັ້ນ ເປັນພຣະອະຣະຫັນ ຕັດສະຣູ້ດ້ວຍ ພຣະອົງເອງໂດຍຖືກຕ້ອງ ພຽບພ້ອມດ້ວຍວິດຊາແລະຈະຣະນະສະເດັດໄປດີ ຮູ້ແຈ້ງໂລກ ເປັນສາຣະຖີ ເຝິກຜູ້ທີ່ຄວນເຝິກໄດ້ຢ່າງປະເສີດ ເປັນສາດສະດາຂອງເທວະດາແລະມະນຸດທັງຫຼາຍ ເປັນພຣະພຸດທະເຈົ້າ ເປັນພຣະຜູ້ມີພຣະພາກເຈົ້າ໌ ພຣະອົງຊົງຮູ້ແຈ້ງໂລກນີ້ພ້ອມທັງເທວະໂລກ ມານໂລກ ພົມໂລກ ແລະໝູ່ສັດພ້ອມທັງສະມະນະພາມເທວະດາແລະມະນຸດດ້ວຍພຣະອົງເອງແລ້ວ ຈຶ່ງຊົງປະກາດໃຫ້ຜູ້ອື່ນຮູ້ຕາມສະແດງທຳມີຄວາມງາມໃນເບື້ອງຕົ້ນ ມີຄວາມງາມໃນທ່າມກາງ ແລະມີຄວາມງາມໃນບ່ອນສຸດ ຊົງປະກາດພົມມະຈັນພ້ອມທັງອັດຖະແລະພະຍັນຊະນະບໍລິບູນ ບໍລິສຸດຄົບຖ້ວນ ການໄດ້ພົບພຣະອະຣະຫັນທັງຫຼາຍແນວນີ້ເປັນຄວາມດີຢ່າງແທ້ຈິງ"

ຄັ້ງນັ້ນ ເກນິຍະຊະດິນໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາຈະນຳອັນໃດນໍໄປຖວາຍພຣະສະມະນະ ໂຄດົມ" ໄດ້ມີຄວາມຄິດດັ່ງນີ້ວ່າ "ພວກລືສີຜູ້ເປັນບູຣະພາຈານຂອງພວກພາມ ຄື ລືສີອັດຖະກະ ລືສີວາມະກະ ລືສີວາມະເທວະ ລືສີເວດສາມິດຕະ ລືສີຍະມະຕັກຄີ ລືສີອັງຄີຣະສະ ລືສີພາຣະທະວາຊະ ລືສີວາເສດຖະ ລືສີກັດສະປະ ລືສີພະຄຸ ເຊິ່ງເປັນຜູ້ແຕ່ງມົນ ສອນມົນ ທີ່ພວກພາມໃນເວລານີ້ສູດ ສອນເຊິ່ງບົດມົນເກົ່າທີ່ທ່ານສູດ ສອນ ຮີບໂຮມໄວ້ ສອນໄດ້ຖືກຕ້ອງຕາມທີ່ທ່ານສອນໄວ້ ບອກໄດ້ຖືກຕ້ອງຕາມທີ່ທ່ານບອກໄວ້[9] ລືສີເຫຼົ່ານັ້ນເປັນຜູ້ບໍ່ສັນອາຫານໃນຣາຕີ ງົດສັນໃນເວລາວິການ ລືສີເຫຼົ່ານັ້ນຍິນດີນ້ຳດື່ມແບບນີ້ ແມ່ນພຣະສະມະນະໂຄດົມກໍບໍ່ສັນອາຫານໃນຣາຕີ ງົດສັນໃນເວລາວິການ ກໍນັກຈະຍິນດີນ້ຳດື່ມແບບນີ້ແດ່" ແລ້ວສັ່ງໃຫ້ກຽມນ້ຳດື່ມຫຼວງຫຼາຍໃຫ້ຄົນຫາບໄປເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ເມື່ອເຖິງແລ້ວໄດ້ສົນທະນາປາໄສກັບພຣະຜູ້ມີພຣະພາກເຈົ້າພໍເປັນທີ່ບັນເທີງໃຈ ພໍເປັນ ທີ່ຣະນຶກເຖິງກັນແລະກັນແລ້ວໄດ້ຢືນທີ່ສົມຄວນ ເກນິຍະຊະດິນຜູ້ຢືນທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ພຣະໂຄດົມ ໂຜດຮັບນ້ຳດື່ມຂອງຂ້າພຣະອົງດ້ວຍເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເກນິຍະ ຖ້າເປັນແບບນັ້ນ ທ່ານຈົ່ງຖວາຍແກ່ພິກຂຸທັງຫຼາຍ" ພິກຂຸທັງຫຼາຍຢຳເກງຢູ່ຈຶ່ງບໍ່ຍອມຮັບປະເຄນ

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ພວກທ່ານຈົ່ງຮັບປະເຄນສັນເທີ້ນ"

ຄັ້ງນັ້ນ ເກນິຍະຊະດິນໄດ້ນຳນ້ຳດື່ມຫຼວງຫຼາຍປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຫ້າມພັດຕາຫານແລ້ວຊົງລະພຣະຫັດຈາກບາດ ຈຶ່ງໄດ້ນັ່ງເຝົ້າຢູ່ທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເກນິຍະເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ລຳດັບນັ້ນ ເກນິຍະຊະດິນຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍພຣະໂຄດົມຜູ້ຈະເລີນພ້ອມກັບພິກຂຸສົງຊົງຮັບພັດຕາຫານຂອງຂ້າພຣະອົງເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ເກນິຍະ ພິກຂຸສົງໝູ່ໃຫຍ່ ມີຈຳນວນ ໑,໒໕໐ ອົງ ແລະທ່ານເອງກໍເຫຼື້ອມໃສຍິ່ງໃນໝູ່ພາມ"

ແມ່ນເທື່ອທີ ໒ ເກນິຍະຊະດິນກໍຂາບທູນນິມົນວ່າ "ພຣະໂຄດົມຜູ້ຈະເລີນ ແມ່ນພິກຂຸສົງໝູ່ໃຫຍ່ ມີຈຳນວນ ໑,໒໕໐ ອົງ ແລະຂ້າພຣະອົງ ເຫຼື້ອມໃສຍິ່ງໃນໝູ່ພາມ ກໍຈິງ ຢ່າງໃດກໍ່ຕາມ

ຂໍພຣະໂຄດົມຜູ້ຈະເລີນພ້ອມກັບພິກຂຸສົງຊົງຮັບພັດຕາຫານຂອງຂ້າພຣະອົງເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນ”

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ຄັ້ງນັ້ນ ເກນີຍະຊະດິນຮູ້ການທີ່ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ໄດ້ລຸກຈາກອາສະນະ ຖວາຍບັງຄົມພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວກັບໄປ

## ຊົງອະນຸຍາດນ້ຳອັດຖະບານ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳອັດຖະບານ ຄື

| | |
|---|---|
| ໑. ນ້ຳໝາກມ່ວງ | ໒. ນ້ຳໝາກຫວ້າ |
| ໓. ນ້ຳກ້ວຍມີເມັດ | ໔. ນ້ຳກ້ວຍບໍ່ມີເມັດ |
| ໕. ນ້ຳໝາກຊາງ | ໖. ນ້ຳໝາກຈັບ ຫຼື ອະງຸ່ນ |
| ໗. ນ້ຳເຫງົ້າບົວ | ໘. ນ້ຳໝາກາງ ຫຼື ລີ້ນຈີ່ |

ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳໝາກໄມ້ທຸກຊະນິດ ເວັ້ນນ້ຳຕົ້ນເມັດເຂົ້າເປືອກ ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳໃບໄມ້ທຸກຊະນິດ ເວັ້ນນ້ຳສົ້ມຜັກ ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳດອກໄມ້ທຸກຊະນິດ ເວັ້ນນ້ຳດອກໝາກຊາງ ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳອ້ອຍສົດ”

ຄືນນັ້ນ ເກນີຍະຊະດິນໃຫ້ກຽມໂພຊະນາຫານອັນປະນີດທີ່ອາສົມຂອງຕົນແລ້ວໃຫ້ຄົນໄປຂາບທູນພັດຕະການພຣະຜູ້ມີພຣະພາກເຈົ້າວ່າ “ເຖິງເວລາແລ້ວ ຂ້ານ້ອຍ ພັດຕາຫານສຳເລັດແລ້ວ”

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກແລ້ວ ຊົງຖືບາດແລະຈີວອນ ສະເດັດໄປທີ່ອາສົມຂອງເກນີຍະຊະດິນ ປະທັບນັ່ງເທິງອາສະນະທີ່ຈັດຖວາຍພ້ອມດ້ວຍພິກຂຸສົງ ເກນີຍະຊະດິນໄດ້ນຳຂອງຫຍ້ຳຂອງສັນອັນປະນີດປະເຄນພິກຂຸສົງມີພຣະພຸດທະເຈົ້າຊົງເປັນປະທານດ້ວຍມືຂອງຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດຫ້າມພັດຕາຫານແລ້ວ ຊົງລະພຣະຫັດຈາກບາດແລ້ວ ຈຶ່ງນັ່ງເຝົ້າຢູ່ທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາແກ່ເກນີຍະຊະດິນດ້ວຍພຣະຄາຖານີ້ວ່າ

ຍັນພິທີມີການບູຊາໄຟເປັນປະທານ
ສາວິດຕິສັນເປັນປະທານຂອງພຣະເວດ
ພຣະເຈົ້າແຜ່ນດິນເປັນປະທານຂອງປະຊາຣາດ
ມະຫາສະມຸດເປັນປະທານຂອງແມ່ນ້ຳ

ດວງຈັນເປັນປະທານແຫ່ງດາວເລີກ
ດວງອາທິດເປັນປະທານແຫ່ງສິ່ງທີ່ຮ້ອນ ສັນໃດ
ພຣະສົງກໍເປັນປະທານຂອງທາຍົກຜູ້ມຸ້ງບຸນຖວາຍທານຢູ່ ສັນນັ້ນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າເມື່ອຊົງອະນຸໂມທະນາເກນິຍະຊະດິນສຳເລັດ ຈຶ່ງຊົງລຸກຈາກອາສະນະແລ້ວສະເດັດກັບ

## ໑໘໓. ໂຣຊະມັນລະວັດຖຸ

## ວ່າດ້ວຍເຈົ້າມັນລະຊື່ໂຣຊະຖວາຍຜັກກາດສົດແລະຂອງສັນເຮັດດ້ວຍແປ້ງ

[໓໐໑] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ອາປະນະນິຄົມຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງເມືອງກຸສິນາຣາພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ມີຈຳນວນ ໑,໒໕໐ ອົງ ພວກມັນລະກະສັດຊາວນະຄອນກຸສິນາຣາໄດ້ຮູ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າສະເດັດມານະຄອນກຸສິນາຣາພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ມີຈຳນວນ ໑,໒໕໐ ອົງ" ໄດ້ເຮັດກະຕິກາກັນວ່າ "ຜູ້ບໍ່ຕ້ອນຮັບພຣະຜູ້ມີພຣະພາກເຈົ້າຈະຖືກປັບສິນໃໝ ມີຈຳນວນ ໕໐໐ ກະຫາປະນະ"

ສະໄໝນັ້ນ ມັນລະກະສັດຊື່ໂຣຊະເປັນສະຫາຍຂອງທ່ານພຣະອານົນ ຄັ້ງນັ້ນພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນກຸສິນາຣາ ລຳດັບນັ້ນ ພວກມັນລະກະສັດຊາວນະຄອນກຸສິນາຣາໄດ້ຕ້ອນຮັບພຣະຜູ້ມີພຣະພາກເຈົ້າ ຄັ້ງນັ້ນ ມັນລະກະສັດຊື່ໂຣຊະຮັບສະເດັດພຣະຜູ້ມີພຣະພາກເຈົ້າແລ້ວໄດ້ເຂົ້າໄປຫາທ່ານພຣະອານົນ ເຖິງທີ່ພັກ ຊົງອະພິວາດແລ້ວປະທັບຢືນຢູ່ ທີ່ສົມຄວນ

ທ່ານພຣະອານົນກ່າວກັບມັນລະກະສັດຊື່ໂຣຊະຜູ້ປະທັບຢືນຢູ່ ເຖິງທີ່ສົມຄວນວ່າ "ໂຣຊະ ທ່ານຮັບສະເດັດພຣະຜູ້ມີພຣະພາກເຈົ້າໄດ້ສົມພຣະກຽດຈິງ ໆ"

ມັນລະກະສັດຊື່ໂຣຊະຕັດວ່າ "ຂ້າພະເຈົ້າບໍ່ໄດ້ຕ້ອນຮັບພຣະພຸດ ພຣະທຳ ພຣະສົງໃຫ້ຍິ່ງ ໃຫຍ່ເລີຍ ແຕ່ພວກຍາດໄດ້ເຮັດກະຕິກາກັນວ່າ ຜູ້ບໍ່ຕ້ອນຮັບພຣະຜູ້ມີພຣະພາກເຈົ້າຈະຖືກປັບສິນໃໝ ໕໐໐ ກະຫາປະນະ ຂ້າພະເຈົ້າຮັບສະເດັດພຣະຜູ້ມີພຣະພາກເຈົ້າແນວນີ້ກໍຍ້ອນຢ້ານພວກຍາດຈະປັບສິນໃໝ"

ຄັ້ງນັ້ນ ທ່ານພຣະອານົນບໍ່ພໍໃຈວ່າ "ເປັນຫຍັງມັນລະກະສັດໂຣຊະຈຶ່ງຕັດແນວນີ້ນໍ" ໄດ້ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ ທ່ານພຣະອານົນຜູ້ນັ່ງທີ່ສົມຄວນໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ

ດັ່ງນີ້ວ່າ "ມັນລະກະສັດໂຣຊະຜູ້ນີ້ເປັນຄົນມີຊື່ສຽງ ມີຄົນຮູ້ຈັກຫຼາຍ ແລະຄວາມເຫຼື້ອມໃສໃນພຣະທຳວິໄນຂອງຄົນແນວນີ້ມີປະໂຫຍດຫຼາຍ ພຣະອົງໂຜດຊົງກະທຳໃຫ້ມັນລະກະສັດໂຣຊະເຫຼື້ອມໃສໃນພຣະທຳວິໄນນີ້ດ້ວຍເທີ້ນຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ການທີ່ຈະກະທຳໃຫ້ມັນລະກະສັດຊື່ໂຣຊະເຫຼື້ອມໃສໃນພຣະທຳວິໄນ ເຮັດໄດ້ບໍ່ຍາກ"

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຊົງແຜ່ພຣະເມດຕາຈິດໄປສູ່ມັນລະກະສັດຊື່ໂຣຊະແລ້ວສະເດັດລຸກຈາກອາສະນະເຂົ້າພຣະວິຫານ ມັນລະກະສັດໂຣຊະພໍໄດ້ຮັບກະແສພຣະເມດຕາຈິດຂອງພຣະຜູ້ມີພຣະພາກເຈົ້າຖືກຕ້ອງຈຶ່ງທ່ຽວຄົ້ນຫາຕາມພຣະວິຫານ ຕາມບໍລິເວນທົ່ວທຸກແຫ່ງ ຄືງົວແມ່ລູກອ່ອນ ຕັດຖາມພິກຂຸທັງຫຼາຍວ່າ "ເວລານີ້ ພຣະຜູ້ມີພຣະພາກອະຣະຫັນຕະສຳມາສຳພຸດທະເຈົ້າພຣະອົງນັ້ນປະທັບຢູ່ທີ່ໃດ ຂ້ານ້ອຍ ຂ້າພະເຈົ້າຕ້ອງການພົບພຣະອົງ"

ພິກຂຸທັງຫຼາຍຖວາຍພຣະພອນວ່າ "ທ່ານໂຣຊະ ພຣະວິຫານຫຼັງນັ້ນເຂົາອັດປະຕູສາແລ້ວໂຜດສະງົບສຽງ ທ່ານຈົ່ງສະເດັດເຂົ້າໄປທາງພຣະວິຫານຫຼັງນັ້ນແລ້ວຄ່ອຍ ໆ ສະເດັດດຳເນີນໄປທີ່ໜ້າມຸກ ອະແຮມແລ້ວເຄາະປະຕູເທີ້ນ ພຣະອົງຈະຊົງໄຂປະຕູຮັບທ່ານ"

ຂະນະນັ້ນ ມັນລະກະສັດໂຣຊະຊົງສະງົບສຽງ ສະເດັດເຂົ້າໄປທາງພຣະວິຫານເຊິ່ງອັດຢູ່ຄ່ອຍ ໆ ສະເດັດດຳເນີນໄປທີ່ໜ້າມຸກ ອະແຮມແລ້ວເຄາະປະຕູ ພຣະຜູ້ມີພຣະພາກເຈົ້າຊົງເປີດປະຕູຮັບ[໑] ມັນລະກະສັດໂຣຊະຈຶ່ງສະເດັດເຂົ້າພຣະວິຫານ ຖວາຍບັງຄົມແລ້ວປະທັບນັ່ງຢູ່ທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າໄດ້ຕັດອະນຸປຸບພີກະຖາ ຄື ຊົງປະກາດ

໑. ທານະກະຖາ ໒. ສີລະກະຖາ
໓. ສັກຄະກະຖາ ໔. ກາມາທີນະວະກະຖາ
໕. ເນກຂຳມານິສັງສະກະຖາ ແກ່ມັນລະກະສັດໂຣຊະຜູ້ນັ່ງທີ່ສົມຄວນ

ເມື່ອຊົງຊາບວ່າມັນລະກະສັດໂຣຊະນັ້ນມີຈິດຄວນ ອ່ອນ ປາສະຈາກນິວອນ ເບີກບານຜ່ອງໃສ ຈຶ່ງຊົງປະກາດສາມຸກກັງສິກະທຳມະເທດສະໜາຂອງພຣະພຸດທະເຈົ້າທັງຫຼາຍ ຄື ທຸກສະມຸໄທ ນິໂຣດ ມັກ ທຳມະຈັກຂຸອັນປາສະຈາກທຸລີ ປາສະຈາກມົນທິນໄດ້ເກີດແກ່ມັນລະກະສັດໂຣຊະ ທີ່ອາສະນະນັ້ນແລວ່າ "ສິ່ງໃດສິ່ງໜຶ່ງມີຄວາມເກີດຂຶ້ນເປັນທຳມະດາ ສິ່ງນັ້ນ ທັງປວງມີຄວາມດັບໄປເປັນທຳມະດາ" ປຽບຄືຜ້າຂາວສະອາດ ປາສະຈາກມົນທິນ ຄວນຮັບນ້ຳຍ້ອມໄດ້ເປັນຢ່າງດີ

ຄັ້ງນັ້ນ ມັນລະກະສັດໂຣຊະໄດ້ເຫັນທຳແລ້ວ ບັນລຸທຳແລ້ວ ຮູ້ແຈ້ງທຳແລ້ວ ຢັ່ງລົງສູ່ທຳແລ້ວ ຂ້າມຄວາມສົງໄສແລ້ວ ປາສະຈາກຄວາມແຄງໃຈ ເຖິງຄວາມເປັນຜູ້ ແກ່ກ້າບໍ່ຕ້ອງເຊື່ອໃຜອີກໃນຄຳສອນຂອງພຣະສາດສະດາ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ພິກຂຸທັງຫຼາຍໂຜດຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຂອງຂ້າພຣະອົງພຽງຄົນດຽວ ຢ່າຮັບຂອງຄົນອື່ນເລີຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂຣຊະ ແມ່ນອະຣິຍະບຸກຄົນອື່ນ ໆ ຜູ້ໄດ້ເຫັນທຳດ້ວຍຍານອັນເປັນເສຂະ ດ້ວຍທັດສະນະອັນເປັນເສຂະຄືກັບທ່ານກໍຄົງກ່າວແນວນີ້ວ່າ ພິກຂຸ ຈົ່ງຮັບຈີວອນ ບິນທະບາດ ເສນາສະນະ ແລະຄິລານະປັດໄຈເພສັດບໍຣິຂານຂອງເຮົາທໍ່ນັ້ນ ຢ່າຮັບຂອງຄົນອື່ນເລີຍ ດັ່ງນັ້ນ ພິກຂຸທັງຫຼາຍ ຈຶ່ງຮັບທັງຂອງທ່ານແລະຂອງຄົນອື່ນ"

[໖໐໔] ສະໄໝນັ້ນ ຊາວບ້ານຈັດກຽມພັດຕາຫານອັນປະນີດໄວ້ທີ່ນະຄອນກຸສິນາຣາ ເມື່ອມັນລະກະສັດໂຣຊະບໍ່ມີໂອກາດຖວາຍພັດຕາຫານ ຈຶ່ງໄດ້ຊົງມີພຣະດຳຣິດັ່ງນີ້ວ່າ "ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງກວດເບິ່ງໂຮງອາຫານ ຈັດກຽມສິ່ງທີ່ບໍ່ມີໃນໂຮງອາຫານໄວ້" ແລ້ວກວດເບິ່ງໂຮງອາຫານ ບໍ່ຊົງເຫັນຂອງ ໔ ຢ່າງ ຄື ຜັກສົດແລະຂອງສັນເຮັດດ້ວຍແປ້ງ ຈຶ່ງສະເດັດເຂົ້າໄປຫາທ່ານພຣະອານົນຕັດວ່າ "ເມື່ອຂ້າພະເຈົ້າບໍ່ມີໂອກາດຈະຖວາຍພັດຕາຫານໃນບ່ອນນີ້ຈຶ່ງຄິດວ່າ ເຮົາຄວນກວດເບິ່ງໂຮງອາຫານ ຈັດກຽມສິ່ງທີ່ບໍ່ມີໃນໂຮງອາຫານໄວ້ ແລ້ວກວດເບິ່ງໂຮງອາຫານ ບໍ່ເຫັນຂອງ ໔ ຢ່າງ ຄື ຜັກສົດແລະຂອງສັນເຮັດດ້ວຍແປ້ງ ຖ້າຂ້າພະເຈົ້າກຽມຜັກສົດແລະ ຂອງສັນເຮັດດ້ວຍແປ້ງຖວາຍ ພຣະຜູ້ມີພຣະພາກເຈົ້າຈະຊົງຮັບສິ່ງນັ້ນບໍ ພຣະຜູ້ເປັນເຈົ້າ"

ທ່ານພຣະອານົນກ່າວວ່າ "ອາດຕະມາຈະຂາບທູນຖາມພຣະຜູ້ມີພຣະພາກເຈົ້າ" ແລ້ວໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າ

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອານົນ ຖ້າເປັນແນວນັ້ນ ເຂົາຈົ່ງຈັດກຽມເທີ້ນ"

ພຣະອານົນຖວາຍພຣະພອນວ່າ "ໂຣຊະ ຖ້າເປັນແນວນັ້ນ ທ່ານຈົ່ງຈັດກຽມເທີ້ນ"

ຄືນນັ້ນມັນລະກະສັດໂຣຊະໃຫ້ຈັດກຽມຜັກສົດແລະຂອງສັນເຮັດດ້ວຍແປ້ງເປັນຈຳນວນຫຼາຍ ນ້ອມຖວາຍພຣະຜູ້ມີພຣະພາກເຈົ້າ ຂາບທູນວ່າ "ຂ້ານ້ອຍ ຂໍພຣະຜູ້ມີພຣະພາກເຈົ້າໂຜດຊົງຮັບຜັກສົດແລະຂອງສັນເຮັດດ້ວຍແປ້ງຂອງຂ້າພຣະອົງເທີ້ນ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂຣຊະ ຖ້າເປັນແນວນັ້ນ ທ່ານຈົ່ງຖວາຍແກ່ພິກຂຸທັງຫຼາຍ" ພວກພິກຂຸຢຳເກງຢູ່ຈຶ່ງບໍ່ຍອມຮັບປະເຄນ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພວກທ່ານຈົ່ງຮັບປະເຄນສັນເທີ້ນ"

ຄັ້ງນັ້ນ ມັນລະກະສັດໂຣຊະຊົງນຳຜັກສົດແລະຂອງສັນເຮັດດ້ວຍແປ້ງເປັນຈຳນວນຫຼາຍ ປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານດ້ວຍພຣະຫັດຂອງພຣະອົງເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດ ຊົງຫ້າມພັດຕາຫານແລ້ວ ຊົງລະພຣະຫັດຈາກບາດ ຈຶ່ງໄດ້ນັ່ງເຝົ້າຢູ່ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ມັນລະກະສັດໂຣຊະເຫັນແຈ້ງ ຊວນໃຫ້ຢາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ຊົງລຸກຈາກອາສະນະສະເດັດກັບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜັກສົດທຸກຊະນິດແລະຂອງສັນເຮັດດ້ວຍແປ້ງທຸກຊະນິດ"

## ໑໘໔. ອຸດຖະປັບພະຊິຕະວັດຖຸ

## ວ່າດ້ວຍພິກຂຸເຖົ້າເຄີຍເປັນຊ່າງຕັດຜົມໃນເມືອງອາຕຸມາ

[໓໐໓] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ນະຄອນກຸສິນາຣາຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງເມືອງອາຕຸມາ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ມີຈຳນວນ ໑,໒໕໐ ອົງ

ສະໄໝນັ້ນ ມີພຣະຜູ້ເຖົ້າອົງໜຶ່ງເຄີຍເປັນຊ່າງຕັດຜົມ[1] ອາໄສຢູ່ໃນເມືອງອາຕຸມາ ພຣະຜູ້ເຖົ້ານັ້ນມີບຸດຊາຍ ໒ ຄົນ[2] ເປັນເດັກເວົ້າຈາມ່ວນອ່ອນຫວານ ມີສະຕິປັນຍາ ດຸໝັ່ນຂັນແຂງ ຝີມືຢ້ຽມໃນງານຕັດຜົມຂອງຕົນທຽບທໍ່ລະດັບອາຈານ

ພຣະຜູ້ເຖົ້ານັ້ນໄດ້ຮູ້ຂ່າວວ່າ "ພຣະຜູ້ມີພຣະພາກເຈົ້າກຳລັງສະເດັດມາເມືອງອາຕຸມາ ພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ມີຈຳນວນ ໑,໒໕໐ ອົງ" ລຳດັບນັ້ນ ພຣະຜູ້ເຖົ້ານັ້ນໄດ້ກ່າວກັບບຸດທັງສອງດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າກຳລັງສະເດັດມາເມືອງອາຕຸມາພ້ອມດ້ວຍພິກຂຸສົງໝູ່ໃຫຍ່ ມີຈຳນວນ ໑,໒໕໐ ອົງ ລູກທັງສອງຈົ່ງຖືເຄື່ອງມືຕັດຜົມແລະແຖຜົມພ້ອມກັບໂອແລະຖົງທ່ຽວໄປຕັດແລະແຖຜົມຕາມບ້ານເຮືອນ ຮີບໂຮມເກືອແດ່ ນ້ຳມັນແດ່ ເຂົ້າສານແດ່ ຂອງສັນແດ່ໄວ້ ພໍ່ຈະທຸງເຂົ້າຕົ້ມຖວາຍພຣະຜູ້ມີພຣະພາກເຈົ້າຜູ້ສະເດັດມາເຖິງ"

ບຸດຊາຍທັງສອງຮັບຄຳສັ່ງຂອງພຣະຜູ້ເຖົ້າຜູ້ເປັນພໍ່ແລ້ວຖືເຄື່ອງມືຕັດຜົມພ້ອມ ກັບໂອແລະຖົງທ່ຽວໄປຕັດແລະແຖຜົມຕາມບ້ານເຮືອນ ຮີບໂຮມແລກເກືອແດ່ ນ້ຳມັນແດ່ ເຂົ້າສານແດ່ຂອງສັນແດ່ ຄົນທັງຫຼາຍເຫັນເດັກທັງສອງຄົນເວົ້າຈາມ່ວນອ່ອນຫວານມີສະຕິປັນຍາ ແມ່ນຜູ້ທີ່ບໍ່ປະສົງຈະໃຫ້ຕັດ ກໍໃຫ້ຕັດ ເຖິງໃຫ້ຕັດແລ້ວກໍໃຫ້ຄ່າແຮງຫຼາຍ ດັ່ງນັ້ນ ເດັກທັງສອງຈຶ່ງຮີບໂຮມເກືອແດ່ ນ້ຳມັນແດ່ ເຂົ້າສານແດ່ ຂອງສັນແດ່ໄດ້ເປັນຈຳນວນຫຼາຍ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປໂດຍລຳດັບ ຈົນເຖິງເມືອງອາຕຸມາ ໄດ້ຂ່າວວ່າພຣະຜູ້ມີພຣະພາກເຈົ້າປະທັບຢູ່ພູສາຄານ ຄືນນັ້ນພຣະຜູ້ເຖົ້າອົງນັ້ນສັ່ງຄົນໃຫ້ຈັດກຽມເຂົ້າຕົ້ມຫຼວງຫຼາຍແລ້ວນ້ອມເຂົ້າໄປຖວາຍພຣະຜູ້ມີພຣະພາກເຈົ້າວ່າ "ພຣະຜູ້ມີພຣະພາກໂຜດຮັບເຂົ້າຕົ້ມຂອງຂ້າພຣະອົງເທີ້ນ ຂ້ານ້ອຍ"

## ພຸດທະປະເພນີ

ພຣະຕະຖາຄົດເຈົ້າທັງຫຼາຍຊົງຊາບເລື້ອງຕັດຖາມກໍມີ ບໍ່ຕັດຖາມກໍມີ ຊົງຮູ້ການອັນຄວນຕັດຖາມກໍມີ ບໍ່ຕັດຖາມກໍມີ ຕັດຖາມເລື້ອງທີ່ເປັນປະໂຫຍດ ບໍ່ຕັດຖາມເລື້ອງທີ່ບໍ່ເປັນປະໂຫຍດຍ້ອນພຣະຕະຖາຄົດເຈົ້າທັງຫຼາຍຊົງກຳຈັດເລື້ອງທີ່ບໍ່ເປັນປະໂຫຍດ ດ້ວຍອະຣິຍະມັກແລ້ວ

ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍ ສອບຖາມພິກຂຸທັງຫຼາຍດ້ວຍເຫດ ໒ ປະການ ຄືຈະຊົງສະແດງທຳແນວໜຶ່ງ ຈະຊົງບັນຍັດສິກຂາບົດແກ່ ພຣະສາວົກແນວໜຶ່ງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຈຶ່ງໄດ້ຕັດຖາມພຣະຜູ້ເຖົ້ານັ້ນວ່າ "ເຂົ້າຕົ້ມນີ້ທ່ານໄດ້ມາຈາກໃສ"

ພຣະຜູ້ເຖົ້ານັ້ນຈຶ່ງໄດ້ຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ເປັນຫຍັງທ່ານບວດແລ້ວ ຈຶ່ງໄດ້ຊັກຈູງທາຍົກໃນສິ່ງອັນບໍ່ຄວນນໍ ໂມຄະບຸຣຸດ ການເຮັດແນວນີ້ບໍ່ໄດ້ເຮັດຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຈຶ່ງຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ບັນພະຊິດບໍ່ເພິ່ງຊັກຊວນທາຍົກໃນສິ່ງບໍ່ຄວນ ອົງໃດຊັກຊວນ ຕ້ອງອາບັດທຸກກົດ ພິກຂຸທັງຫຼາຍ ອັນໜຶ່ງ ພິກຂຸຜູ້ເຄີຍເປັນຊ່າງຕັດຜົມບໍ່ເພິ່ງເກັບຮັກສາເຄື່ອງມືຕັດຜົມ ອົງໃດເກັບຮັກສາໄວ້ ຕ້ອງອາບັດທຸກກົດ"

## ເລື້ອງໝາກໄມ້ດາດດື່ນໃນນະຄອນສາວັດຖີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ເມືອງອາຕຸມາຕາມພຣະອັດທະຍາໄສແລ້ວສະເດັດ ຈາຣິກໄປທາງນະຄອນສາວັດຖີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນສາວັດຖີແລ້ວ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ໃນ ນະຄອນສາວັດຖີນັ້ນ

ເວລານັ້ນ ໃນນະຄອນສາວັດຖີ ມີຂອງສັນຄີໝາກໄມ້ດາດດື່ນ ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ສົນທະນາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຂອງສັນຄີໝາກໄມ້ບໍ່ບໍ່" ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຂອງສັນຄີໝາກໄມ້ທຸກຊະນິດ"

## ເລື້ອງປຸກພືດ

[໓໐໔] ສະໄໝນັ້ນ ເຂົາປຸກພືດຂອງສົງໃນທີ່ຂອງບຸກຄົນປຸກພືດຂອງບຸກຄົນໃນທີ່ຂອງສົງ

ພິກຂຸທັງຫຼາຍ ໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພືດຂອງສົງທີ່ປຸກໃນທີ່ຂອງບຸກຄົນເພິ່ງໃຫ້ສ່ວນແບ່ງແລ້ວບໍຣິໂພກໄດ້ ພືດຂອງບຸກຄົນທີ່ປຸກໃນທີ່ຂອງສົງເພິ່ງໃຫ້ສ່ວນແບ່ງແລ້ວບໍຣິໂພກໄດ້"

## ໑໗໔. ຈະຕຸມະຫາປະເທສະກະຖາ

### ວ່າດ້ວຍມະຫາປະເທດ ໔

[໓໐໕] ສະໄໝນັ້ນ ພິກຂຸທັງຫຼາຍເກີດຄວາມຢຳເກງຢູ່ໃນຂໍ້ບັນຍັດບາງຢ່າງວ່າ "ສິ່ງໃດນໍພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໄວ້ ສິ່ງໃດນໍບໍ່ຊົງອະນຸຍາດໄວ້"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າໄດ້ປະທານມະຫາປະເທດໄວ້ ໔ ຂໍ້ ຄື

໑. ພິກຂຸທັງຫຼາຍ ສິ່ງໃດເຮົາບໍ່ໄດ້ຫ້າມໄວ້ວ່າ "ສິ່ງນີ້ບໍ່ຄວນ" ຖ້າສິ່ງນັ້ນອະນຸໂລມເຂົ້າກັບສິ່ງທີ່ບໍ່ຄວນ ຂັດກັບສິ່ງທີ່ຄວນ ສິ່ງນັ້ນບໍ່ຄວນ[୨]

໒. ພິກຂຸທັງຫຼາຍ ສິ່ງໃດເຮົາບໍ່ໄດ້ຫ້າມໄວ້ວ່າ "ສິ່ງນີ້ບໍ່ຄວນ" ຖ້າສິ່ງນັ້ນອະນຸໂລມເຂົ້າກັບສິ່ງທີ່ຄວນ ຂັດກັບສິ່ງທີ່ບໍ່ຄວນ ສິ່ງນັ້ນຄວນ[୨]

໓. ພິກຂຸທັງຫຼາຍ ສິ່ງໃດເຮົາບໍ່ໄດ້ອະນຸຍາດໄວ້ວ່າ "ສິ່ງນີ້ຄວນ" ຖ້າສິ່ງນັ້ນອະນຸໂລມເຂົ້າກັບສິ່ງທີ່ບໍ່ຄວນ ຂັດກັບສິ່ງທີ່ຄວນ ສິ່ງນັ້ນບໍ່ຄວນ

໔. ພິກຂຸທັງຫຼາຍ ສິ່ງໃດເຮົາບໍ່ໄດ້ອະນຸຍາດໄວ້ວ່າ "ສິ່ງນີ້ຄວນ" ຖ້າສິ່ງນັ້ນອະນຸໂລມເຂົ້າກັບສິ່ງທີ່ຄວນ ຂັດກັບສິ່ງທີ່ບໍ່ຄວນ ສິ່ງນັ້ນຄວນ

## ເລື່ອງຊົງອະນຸຍາດກາລິກຜະສົມກັນ

ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ສົນທະນາກັນດັ່ງນີ້ວ່າ "ຍາມະກາລິກຜະສົມກັບຍາວະກາລິກຄວນບໍ່ຄວນນໍ ສັນຕາຫະກາລິກຜະສົມກັບຍາວະກາລິກຄວນບໍ່ຄວນນໍ ຍາວະຊີວິກຜະສົມກັບຍາມະກາລິກຄວນບໍ່ຄວນນໍ ຍາວະຊີວິກະຜະສົມກັບສັນຕາຫະກາລິກຄວນບໍ່ຄວນນໍ"[๔]

ພິກຂຸທັງຫຼາຍ ຈຶ່ງນໍາເລື່ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຍາມະກາລິກຜະສົມກັບຍາວະກາລິກທີ່ຮັບປະເຄນໃນມື້ນັ້ນ ຄວນໃນກາລ ບໍ່ຄວນໃນເວລາວິການ

ພິກຂຸທັງຫຼາຍ ສັນຕາຫະກາລິກຜະສົມກັບຍາວະກາລິກທີ່ຮັບປະເຄນໃນມື້ນັ້ນ ຄວນໃນກາລ ບໍ່ຄວນໃນເວລາວິການ

ພິກຂຸທັງຫຼາຍ ຍາວະຊີວິກຜະສົມກັບຍາວະກາລິກທີ່ຮັບປະເຄນໃນມື້ນັ້ນ ຄວນໃນກາລ ບໍ່ຄວນໃນເວລາວິການ

ພິກຂຸທັງຫຼາຍ ສັນຕາຫະກາລິກຜະສົມກັບຍາມະກາລິກທີ່ຮັບປະເຄນໃນມື້ນັ້ນ ຄວນໃນກາລ ບໍ່ຄວນໃນເວລາວິການ

ພິກຂຸທັງຫຼາຍ ຍາວະຊີວິກຜະສົມກັບຍາມະກາລິກທີ່ຮັບປະເຄນໃນມື້ນັ້ນ ຄວນຊົ່ວຍາມ ລ່ວງຍາມແລ້ວບໍ່ຄວນ

ພິກຂຸທັງຫຼາຍ ຍາວະຊີວິກຜະສົມກັບສັນຕາຫະກາລິກທີ່ຮັບປະເຄນໃນມື້ນັ້ນ ຄວນຕະຫຼອດ ໗ ມື້ ລ່ວງ ໗ ມື້ແລ້ວບໍ່ຄວນ

ເພສັດຊະຂັນທະກະທີ ໖ ຈົບ

### ໃນຂັນທະກະນີ້ມີ ໑໐໖ ເລື່ອງ

## ໑໗໖. ລວມເລື່ອງທີ່ມີໃນເພສັດຊະຂັນທະກະ

ເລື່ອງພິກຂຸອາພາດໃນລະດູສາຣະທະ ເລື່ອງເພສັດ ໕ ໃນເວລາວິການ
ເລື່ອງນ້ຳມັນແຫຼວທີ່ເປັນຢາ ເລື່ອງຮາກໄມ້ທີ່ເປັນຢາ
ເລື່ອງຮາກໄມ້ບົດທີ່ເປັນຢາ ເລື່ອງນ້ຳຝາດທີ່ເປັນຢາ ເລື່ອງໃບໄມ້ທີ່ເປັນຢາ
ເລື່ອງໝາກໄມ້ທີ່ເປັນຢາ ເລື່ອງຢາງໄມ້ທີ່ເປັນຢາ ເລື່ອງເກືອທີ່ເປັນຢາ
ເລື່ອງມູນງົວດັບກິ່ນໂຕ

ເລື່ອງຢາຜົງແລະເຄື່ອງຮ່ອນຢາ ເລື່ອງຊີ້ນດິບແລະເລືອດສົດ
ເລື່ອງຢາຢອດຕາ ເລື່ອງເຄື່ອງບົດຢາປະສົມຢາຕາ
ເລື່ອງກັບຢາຕາ ເລື່ອງກັບຢາຕາຊະນິດຕ່າງ ໆ ເລື່ອງກັບຢາຕາ

ບໍ່ມີຝາອັດ ເລື້ອງໄມ້ທາຢາຕາ ເລື້ອງທີ່ເກັບໄມ້ທາຢາຕາ

ເລື້ອງຖົງກັບຢາຕາ ເລື້ອງເຊືອກມັດເປັນສາຍສະພາຍ
ເລື້ອງນ້ຳມັນທາຫົວ ເລື້ອງນັດຢາ ເລື້ອງກ້ອງຢານັດ
ເລື້ອງສູດຄວັນ ກ້ອງສູດຄວັນ ແລະຝາອັດກ້ອງສູດຄວັນ
ເລື້ອງຖົງກ້ອງສູດຄວັນ

ເລື້ອງນ້ຳມັນຫຸງ ເລື້ອງນ້ຳເມົາໃສ່ໃນນ້ຳມັນຫຸງ
ເລື້ອງນ້ຳມັນໃສ່ດ້ວຍນ້ຳເມົາຫຼາຍເກີນໄປ ເລື້ອງຊົງອະນຸຍາດນ້ຳມັນ
ໃສ່ນ້ຳເມົາຫຼາຍໃຊ້ເປັນຢາທາ ເລື້ອງເຕົ້ານ້ຳ ເລື້ອງການຮົມເຫື່ອ
ເລື້ອງຮົມດ້ວຍໃບໄມ້ ເລື້ອງການຮົມໃຫຍ່ ເລື້ອງການຮົມດ້ວຍໃບໄມ້ຕ່າງ ໆ

ເລື້ອງອ່າງນ້ຳ ເລື້ອງລະບາຍໂລຫິດອອກ ເລື້ອງໃຊ້ເຂົາສັດກອກ
ລະບາຍໂລຫິດອອກ ເລື້ອງຢາທາຕີນ ເລື້ອງປຸງນ້ຳມັນທາຕີນ
ເລື້ອງຜ່າຝີ ເລື້ອງນ້ຳຝາດ ເລື້ອງງາບົດ ເລື້ອງຢາພອກ

ເລື້ອງຜ້າພັນບາດ ເລື້ອງຊະບາດດ້ວຍນ້ຳແປ້ງເມັດຜັກກາດ
ເລື້ອງຮົມບາດດ້ວຍຄວັນ ເລື້ອງໃຊ້ກ້ອນເກືອຕັດຊີ້ນປົ່ງ
ເລື້ອງນ້ຳມັນທາບາດ ເລື້ອງຜ້າອັດກັນນ້ຳມັນໄຫຼຍ້ອຍ
ເລື້ອງຢາມະຫາວິກັດ ໔ ຢ່າງ ເລື້ອງຮັບປະເຄນ

ເລື້ອງດື່ມນ້ຳໃສ່ຄູດ ເລື້ອງພິກຂຸຖືກຢາແຝດດື່ມນ້ຳທີ່ລະລາຍຈາກ
ດິນຕິດຜານໄຖ ເລື້ອງດື່ມນ້ຳດ່າງດິບ ເລື້ອງດື່ມນ້ຳສົ້ມມໍດອງມູດງົວ
ເລື້ອງລູບທາຂອງຫອມ ເລື້ອງດື່ມຢາຖ່າຍ ເລື້ອງນ້ຳເຂົ້າໃສ
ເລື້ອງນ້ຳຕົ້ມຖົ່ວຂຽວບໍ່ຂຸ້ນ ເລື້ອງນ້ຳຕົ້ມຖົ່ວຂຽວຂຸ້ນ

ເລື້ອງນ້ຳຕົ້ມຊີ້ນ ເລື້ອງພຣະປິລິນທະວັດສະທຳຄວາມສະອາດ
ເງື້ອມພູແລະພຣະເຈົ້າພິມພິສານພຣະຣາດຊະທານຄົນງານວັດ
ເລື້ອງສັນເພສັດທີ່ເກັບໄວ້ ໗ ມື້ ເລື້ອງນ້ຳອ້ອຍປ່ຽງ ເລື້ອງຖົ່ວຂຽວ
ເລື້ອງຢາດອງໂລນະໂສວີຣະກະ ເລື້ອງອາຫານທີ່ຫຸງຕົ້ມເອງ
ເລື້ອງອຸ່ນພັດຕາຫານ

ເລື້ອງໃຫ້ເກັບອາຫານໄວ້ພາຍໃນແລະຫຸງຕົ້ມເອງເມື່ອເວລາຈຳເປັນ
ເລື້ອງຮັບປະເຄນໝາກໄມ້ທີ່ຈັບຕ້ອງແລ້ວ ເລື້ອງພານຖວາຍງາແລະນ້ຳເຜີ້ງ

ເລື້ອງຂອງສັນທີ່ຮັບປະເຄນໄວ້ຕອນເຊົ້າ
ເລື້ອງພຣະສາຣີບຸດອາພາດຮ້ອນໃນກາຍ
ເລື້ອງສັນໝາກໄມ້ທີ່ປ້ອນເມັດອອກ ເລື້ອງຣິດສີດວງທະວານ

ເລື້ອງຊົງຫ້າມເຮັດວັດຖຸກຳ ເລື້ອງອຸປາສິກາສຸບປີຍາປາດຊີ້ນຂາອ່ອນຖວາຍ
ເລື້ອງຊົງຫ້າມສັນຊີ້ນມະນຸດ ເລື້ອງຊົງຫ້າມສັນຊີ້ນຊ້າງ
ເລື້ອງຊົງຫ້າມສັນຊີ້ນມ້າ ເລື້ອງຊົງຫ້າມສັນຊີ້ນໝາ
ເລື້ອງຊົງຫ້າມສັນຊີ້ນງູ ເລື້ອງຊົງຫ້າມສັນຊີ້ນຣາດຊະສີ
ເລື້ອງຊົງຫ້າມສັນຊີ້ນເສືອໂຄ່ງ ເລື້ອງຊົງຫ້າມສັນຊີ້ນເສືອເຫຼືອງ

ເລື້ອງຊົງຫ້າມສັນຊີ້ນໝີ ເລື້ອງຊົງຫ້າມສັນຊີ້ນເສືອດາວ
ເລື້ອງພາມຖ້າໂອກາດຖວາຍພັດຕາຫານ
ເລື້ອງມະຫາອຳໝາດຜູ້ເຫຼື້ອມໃສໃໝ່
ເລື້ອງຮັບນິມົນໄວ້ທີ່ໜຶ່ງແລ້ວບໍ່ເພິ່ງໄປສັນອີກທີ່ໜຶ່ງ
ເລື້ອງພາມເພລັດຖະກັດຈານະຖວາຍນ້ຳອ້ອຍປ່ຽງ
ເລື້ອງຊົງຮັບອາຄານພັກແຮມ
ເລື້ອງມະຫາອຳໝາດສຸນີທະແລະວັດສະກາຣະ

ເລື້ອງປະຕູໂຄດົມແລະທ່າໂຄດົມທີ່ແມ່ນ້ຳຄົງຄາ
ເລື້ອງຊົງສະແດງອະຣິຍະສັດທີ່ໂກຕິຄາມ ເລື້ອງຍິງງາມເມືອງຊື່ອຳພະປາລີ
ເລື້ອງເຈົ້າລິດສະຫວີ ເລື້ອງຊົງຫ້າມສັນຊີ້ນທີ່ເຂົາເຮັດເຈາະຈົງ
ເລື້ອງນະຄອນເວສາລີຫາອາຫານໄດ້ງ່າຍ
ເລື້ອງຊົງຫ້າມອາຫານທີ່ຫຸງຕົ້ມພາຍໃນເປັນຕົ້ນ

ເລື້ອງຝົນຕັ້ງເຄົ້າ ເລື້ອງພຣະຍະໂສຊະເປັນໄຂ້
ເລື້ອງເມນທະກະຄະຫະບໍດີຖວາຍປັນຈະໂຄຣົດກັບສະບຽງເດີນທາງ
ເລື້ອງເກນິຍະຊະດິນຖວາຍນ້ຳອັດຖະບານ ຄື (໑) ນ້ຳໝາກມ່ວງ
(໒) ນ້ຳໝາກຫວ້າ (໓) ນ້ຳກ້ວຍມີເມັດ (໔) ນ້ຳກ້ວຍບໍ່ມີເມັດ
(໕) ນ້ຳໝາກຊາງ (໖) ນ້ຳໝາກຈັບ ຫຼື ອະງຸ່ນ (໗) ນ້ຳເຫງົ້າບົວ
(໘) ນ້ຳໝາກຜາງ ຫຼື ລິ້ນຈີ່

ເລື້ອງເຈົ້າມັນລະຊີ່ໂຮຊະຖວາຍຜັກກາດສົດແລະຂອງສັນເຮັດດ້ວຍແປ້ງ
ເລື້ອງພິກຂຸເຖົ້າເຄີຍເປັນຊ່າງຕັດຜົມໃນເມືອງອາຕຸມາ
ເລື້ອງໝາກໄມ້ດາດດື່ນໃນນະຄອນສາວັດຖີ ເລື້ອງປຸກພືດ

ເລື້ອງພິກຂຸທັງຫຼາຍເກີດຄວາມຍຳເກງໃນຂໍ້ບັນຍັດບາງຢ່າງ
ເລື້ອງຊົງອະນຸຍາດກາລິກຜະສົມກັນ

**ເພສັດຊະຂັນທະກະ ຈົບ**

# ໗. ກະຖິນຂັນທະກະ

## ໑໗໗. ກະຖິນານຸຊານະນາ

### ວ່າດ້ວຍຊົງອະນຸຍາດໃຫ້ການກະຖິນ

### ເລື້ອງພິກຂຸຊາວເມືອງປາເຖີຍຍະ ໓໐ ອົງ

[໓໐໖] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ເຂດນະຄອນສາວັດຖີ ຄັ້ງນັ້ນພິກຂຸຊາວເມືອງປາເຖີຍຍະ[๑] ຈຳນວນ ໓໐ ອົງ ທັງໝົດຖືອາຣັນຍິກະທຸດົງ ຖືປິນດະປາຕິກະທຸດົງແລະຖືເຕຈີວະຣິກະທຸດົງ ເດີນທາງ ມາເມືອງສາວັດຖີເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ເມື່ອໃກ້ມື້ເຂົ້າພັນສາ ບໍ່ສາມາດຈະເດີນທາງໄປໃຫ້ທັນມື້ເຂົ້າພັນສາໃນນະຄອນສາວັດຖີໄດ້ ຈຶ່ງເຂົ້າພັນສາໃນເມືອງສາເກດລະຫວ່າງທາງ

ພິກຂຸຊາວເມືອງປາເຖີຍຍະເຫຼົ່ານັ້ນມີໃຈຮ້ອນຮົນ ຢູ່ຈຳພັນສາດ້ວຍຄິດວ່າ "ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃກ້ ໆ ພວກເຮົາຫ່າງພຽງ ໖ ໂຍດ ແຕ່ພວກເຮົາກໍບໍ່ໄດ້ເຝົ້າພຣະອົງ"

ເມື່ອລ່ວງໄຕຣມາດ ພິກຂຸເຫຼົ່ານັ້ນອອກພັນສາແລ້ວ ເມື່ອປະວາຣະນາແລ້ວ ຝົນຍັງຕົກລິນຢູ່ ພື້ນແຜ່ນດິນຊຸ່ມຊື້ນໄປດ້ວຍນ້ຳ ເປັນຕົມຫຼົ່ມ ພວກທ່ານມີຈີວອນຊຸ່ມຊື້ນດ້ວຍນ້ຳ ອິດເມື່ອຍເດີນທາງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ທີ່ອາຣາມຂອງອະນາຖະບິນທິກະເສດຖີ ເຂດນະຄອນສາວັດຖີ ແລ້ວຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ນັ່ງທີ່ສົມຄວນ

ການທີ່ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍຊົງສົນທະນາປາໄສກັບພິກຂຸອາຄັນຕຸກະທັງຫຼາຍ ນັ້ນເປັນພຸດທະປະເພນີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸເຫຼົ່ານັ້ນວ່າ "ພິກຂຸທັງຫຼາຍ ທ່ານທັງຫຼາຍຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ພວກທ່ານເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາເປັນຜາສຸກບໍ ແລະບິນທະບາດບໍ່ລຳບາກບໍ"

ພິກຂຸເຫຼົ່ານັ້ນຂາບທູນວ່າ "ຍັງສະບາຍດີ ຂ້ານ້ອຍ ຍັງພໍເປັນຢູ່ໄດ້ ຂ້ານ້ອຍ ອັນໜຶ່ງພວກຂ້າພຣະອົງເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ຢູ່ຈຳພັນສາເປັນຜາສຸກ ແລະບິນທະບາດບໍ່ລຳບາກ ຂ້ານ້ອຍ ຂໍປະທານວະໂຣກາດ ພວກຂ້າພຣະອົງ ມີປະມານ ໓໐ ອົງເປັນພິກຂຸຊາວເມືອງປາເຖີຍຍະ ເດີນທາງມາເມືອງສາວັດຖີເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ເມື່ອໃກ້ເຖິງມື້ເຂົ້າພັນສາ ບໍ່ສາມາດຈະເດີນທາງມາໃຫ້ທັນມື້ເຂົ້າພັນສາໃນນະຄອນສາວັດຖີໄດ້ ຈຶ່ງຈຳ

ພັນສາທີ່ເມືອງສາເກດລະຫວ່າງທາງ ພວກຂ້າພຣະອົງຮ້ອນຮົນໃຈ ຢູ່ຈຳພັນສາດ້ວຍຄິດວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ໃກ້ ໆ ພວກເຮົາຫ່າງພຽງ ໖ ໂຍດ ແຕ່ພວກເຮົາກໍບໍ່ໄດ້ເຝົ້າພຣະອົງ ເມື່ອລ່ວງໄຕຣມາດ ພວກຂ້າພຣະອົງອອກພັນສາແລ້ວ ເມື່ອປະວາຣະນາແລ້ວ ຝົນຍັງຕົກລົນຢູ່ ພື້ນແຜ່ນດິນເຕັມໄປດ້ວຍນ້ຳ ເປັນຕົມຫຼົ່ມ ມີຈີວອນຊຸ່ມຊື້ນດ້ວຍນ້ຳ ອິດເມື່ອຍ ເດີນທາງໄກມາ ຂ້ານ້ອຍ"

## ເລື້ອງອານິສົງກະຖິນ ໕ ຢ່າງ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ຢູ່ຈຳພັນສາແລ້ວການກະຖິນ[១] ພິກຂຸທັງຫຼາຍ ພິກຂຸຜູ້ການກະຖິນແລ້ວຈະໄດ້ອານິສົງ ໕ ຢ່າງ ຄື

໑. ທ່ຽວໄປບໍ່ຕ້ອງບອກລາ
໒. ບໍ່ຕ້ອງຖືໄຕຣຈີວອນໄປຄົບຊຸດ
໓. ສັນຄະນະໂພຊະນະໄດ້
໔. ຊົງອະຕິເຣກຈີວອນໄວ້ໄດ້ຕາມຕ້ອງການ
໕. ພວກທ່ານຈະໄດ້ຈີວອນທີ່ເກີດຂຶ້ນໃນບ່ອນນັ້ນ

ພິກຂຸທັງຫຼາຍ ພວກທ່ານຜູ້ການກະຖິນແລ້ວຍ່ອມໄດ້ອານິສົງ ໕ ຢ່າງນີ້ແລ

## ເລື້ອງວິທີການກະຖິນແລະຍັດຕິທຸຕິຍະກຳມະວາຈາສຳລັບການກະຖິນ

ພິກຂຸທັງຫຼາຍ ສົງເພິ່ງການກະຖິນແບວນີ້ ຄື ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

[໓໐໗] ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜ້າກະຖິນນີ້ເກີດແລ້ວແກ່ສົງ ຖ້າສົງພ້ອມກັນແລ້ວ ເພິ່ງໃຫ້ການກະຖິນແກ່ພິກຂຸຊື່ນີ້ເພື່ອການກະຖິນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຜ້າກະຖິນນີ້ເກີດແລ້ວແກ່ສົງ ຖ້າສົງພ້ອມກັນແລ້ວ ເພິ່ງໃຫ້ການກະຖິນແກ່ພິກຂຸຊື່ນີ້ເພື່ອການກະຖິນ ທ່ານອົງໃດເຫັນດ້ວຍກັບການໃຫ້ຜ້າກະຖິນນີ້ແກ່ພິກຂຸຊື່ນີ້ເພື່ອການກະຖິນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ຜ້າກະຖິນນີ້ອັນສົງໃຫ້ແລ້ວແກ່ພິກຂຸຊື່ນີ້ເພື່ອການກະຖິນ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບວນີ້

## ເລື້ອງກະຖິນບໍ່ເປັນອັນການ

[໓໐໗] ພິກຂຸທັງຫຼາຍ ກະຖິນຍ່ອມເປັນອັນການແນວນີ້ ບໍ່ເປັນອັນການແນວນີ້

ພິກຂຸທັງຫຼາຍ ກໍກະຖິນຍ່ອມບໍ່ເປັນອັນການແນວໃດ ກະຖິນຍ່ອມບໍ່ເປັນອັນການແນວນີ້ຄື

໑. ກະຖິນບໍ່ເປັນອັນການດ້ວຍອາການພຽງ ມີຮອຍຂີດ
໒. ກະຖິນບໍ່ເປັນອັນການດ້ວຍອາການພຽງ ຊັກຜ້າ
໓. ກະຖິນບໍ່ເປັນອັນການດ້ວຍອາການພຽງ ກະຜ້າ
໔. ກະຖິນບໍ່ເປັນອັນການດ້ວຍອາການພຽງ ຕັດຜ້າ
໕. ກະຖິນບໍ່ເປັນອັນການດ້ວຍອາການພຽງ ເນົາຜ້າ
໖. ກະຖິນບໍ່ເປັນອັນການດ້ວຍອາການພຽງ ຫຍິບຜ້າ
໗. ກະຖິນບໍ່ເປັນອັນການດ້ວຍອາການພຽງ ເຮັດລູກດຸມ
໘. ກະຖິນບໍ່ເປັນອັນການດ້ວຍອາການພຽງເ ຮັດຮັງດຸມ
໙. ກະຖິນບໍ່ເປັນອັນການດ້ວຍອາການພຽງ ຕິດຜ້າອະນຸວາດ
໑໐. ກະຖິນບໍ່ເປັນອັນການດ້ວຍອາການພຽງ ຕິດຜ້າອະນຸວາດດ້ານໜ້າ
໑໑. ກະຖິນບໍ່ເປັນອັນການດ້ວຍອາການພຽງ ດາມຜ້າ
໑໒. ກະຖິນບໍ່ເປັນອັນການດ້ວຍອາການພຽງ ຍ້ອມຜ້າເປັນສີໝົ່ນ
໑໓. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ ເຮັດນິມິດໄດ້ມາ
໑໔. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ ເວົ້າລຽບຄຽງໄດ້ມາ
໑໕. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ ຢືມເຂົາມາ
໑໖. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ ເກັບໄວ້ແຮມຄືນ
໑໗. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ ເປັນນິດສັກຄີ
໑໘. ກະຖິນບໍ່ເປັນອັນການດ້ວຍຜ້າທີ່ ບໍ່ເຮັດພິນທຸ
໑໙. ກະຖິນບໍ່ເປັນອັນການເວັ້ນຈາກ ສັງຄາຕິ
໒໐. ກະຖິນບໍ່ເປັນອັນການເວັ້ນຈາກ ອຸດຕະຣາສົງ
໒໑. ກະຖິນບໍ່ເປັນອັນການເວັ້ນຈາກ ອັນຕະຣະວາສົກ
໒໒. ກະຖິນບໍ່ເປັນອັນການເວັ້ນຈາກຈີວອນມີຂັນ໌ ໕ ຫຼືເກີນ ໕ ເຊິ່ງຕັດດີແລ້ວເຮັດໃຫ້ມີມົນທົນສຳເລັດໃນມື້ນັ້ນ
໒໓. ກະຖິນບໍ່ເປັນອັນການຍ້ອນເວັ້ນຈາກບຸກຄົນການ
໒໔. ກະຖິນບໍ່ເປັນອັນການໂດຍຖືກຕ້ອງ ຖ້າພິກຂຸຜູ້ຢູ່ນອກສີມາອະນຸໂມທະນາກະຖິນນັ້ນ

ພິກຂຸທັງຫຼາຍ ກະຖິນຊື່ວ່າບໍ່ເປັນອັນພິກຂຸການແນວນີ້ແລ

## ເລື້ອງກະຖິນເປັນອັນການ

[໓໐໙] ພິກຂຸທັງຫຼາຍ ກະຖິນຍ່ອມເປັນອັນການແນວໃດ ກະຖິນຍ່ອມເປັນອັນການແນວນີ້ ຄື

໑. ກະຖິນເປັນອັນການດ້ວຍ ຜ້າໃໝ່
໒. ກະຖິນເປັນອັນການດ້ວຍ ຜ້າຫຼຽມໃໝ່
໓. ກະຖິນເປັນອັນການດ້ວຍ ຜ້າເກົ່າ
໔. ກະຖິນເປັນອັນການດ້ວຍ ຜ້າບັງສຸກຸນ
໕. ກະຖິນເປັນອັນການດ້ວຍ ຜ້າທີ່ຕົກຕາມຮ້ານ[1]
໖. ກະຖິນເປັນອັນການດ້ວຍ ຜ້າທີ່ບໍ່ໄດ້ເຮັດນິມິດໄດ້ມາ
໗. ກະຖິນເປັນອັນການດ້ວຍ ຜ້າທີ່ບໍ່ໄດ້ເວົ້າລຽບຄຽງໄດ້ມາ
໘. ກະຖິນເປັນອັນການດ້ວຍ ຜ້າທີ່ບໍ່ໄດ້ຢືມເຂົາມາ
໙. ກະຖິນເປັນອັນການດ້ວຍ ຜ້າທີ່ບໍ່ໄດ້ເກັບໄວ້ແຮມຄືນ
໑໐. ກະຖິນເປັນອັນການດ້ວຍ ຜ້າທີ່ບໍ່ເປັນນິດສັກຄີ
໑໑. ກະຖິນເປັນອັນການດ້ວຍ ຜ້າທີ່ເຮັດພິນທຸ
໑໒. ກະຖິນເປັນອັນການດ້ວຍ ສັງຄາຕິ
໑໓. ກະຖິນເປັນອັນການດ້ວຍ ອຸດຕະຣາສົງ
໑໔. ກະຖິນເປັນອັນການດ້ວຍ ອັນຕະຣະວາສົກ
໑໕. ກະຖິນເປັນອັນການດ້ວຍຈີວອນມີຂັນ ໕ ຫຼືເກີນ ໕ ທີ່ຕັດດີແລ້ວ ເຮັດໃຫ້ມີມົນທົນສຳເລັດໃນມື້ນັ້ນ
໑໖. ກະຖິນເປັນອັນການຍ້ອນມີບຸກຄົນການ
໑໗. ກະຖິນເປັນອັນການໂດຍຖືກຕ້ອງ ຖ້າພິກຂຸຜູ້ຢູ່ໃນສີມາອະນຸໂມທະນາກະຖິນນັ້ນ

ພິກຂຸທັງຫຼາຍ ກະຖິນຊື່ວ່າເປັນອັນການແນວນີ້ແລ

## ເລື້ອງກະຖິນເດາະດ້ວຍມາຕິກາ ໘ ຂໍ້

[໓໑໐] ພິກຂຸທັງຫຼາຍ ກະຖິນຍ່ອມເປັນອັນເດາະໄດ້ແນວໃດ[1] ພິກຂຸທັງຫຼາຍ ມາຕິກາແຫ່ງການເດາະກະຖິນມີ ໘ ຂໍ້ ຄື

໑. ກຳນົດດ້ວຍຫຼີກໄປ
໒. ກຳນົດດ້ວຍເຮັດຈີວອນສຳເລັດ
໓. ກຳນົດດ້ວຍຕົກລົງໃຈ
໔. ກຳນົດດ້ວຍຜ້າເສຍຫາຍ
໕. ກຳນົດດ້ວຍໄດ້ຮູ້ຂ່າວ
໖. ກຳນົດດ້ວຍສິ້ນຫວັງ
໗. ກຳນົດດ້ວຍລ່ວງເຂດ
໘. ກຳນົດດ້ວຍເດາະພ້ອມກັນ

## ໑໗໗. ອາຫາຍະສັດຕະກະ
## ວ່າດ້ວຍການເດາະກະຖິນດ້ວຍການຖືຈີວອນຫຼີກໄປ ໆ ກຳລະນີ

[໓໑໑] ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດສຳເລັດແລ້ວຫຼີກໄປ ຄິດວ່າຈະບໍ່ກັບ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຫຼີກໄປ (໑)

ພິກຂຸການກະຖິນແລ້ວຖືເອົາຈີວອນຫຼີກໄປ[໔] ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ ເຮັດຈີວອນນີ້ທີ່ພາຍນອກສີມານີ້ແລ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ການເດາະກະຖິນ ຂອງ ພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໒)

ພິກຂຸການກະຖິນແລ້ວຖືເອົາຈີວອນຫຼີກໄປ ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໓)

ພິກຂຸການກະຖິນແລ້ວຖືເອົາຈີວອນຫຼີກໄປ ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ ເຮັດຈີວອນນີ້ພາຍນອກສີມານີ້ແລ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໔)

ພິກຂຸການກະຖິນແລ້ວຖືເອົາຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາ ໃຫ້ເຮັດຈີວອນ ຜືນນັ້ນ ເມື່ອເຮັດສຳເລັດແລ້ວໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ການເດາະກະ ຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍໄດ້ຮູ້ຂ່າວ (໕)

ພິກຂຸການກະຖິນແລ້ວຖືເອົາຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາ ໃຫ້ເຮັດຈີວອນ ຜືນນັ້ນ ເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ ຈະກັບ" ແລ້ວລ່ວງເວລາກະຖິນເດາະນອກ ສີມາ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍລ່ວງເຂດ (໖)

ພິກຂຸການກະຖິນແລ້ວຖືເອົາຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາ ໃຫ້ເຮັດຈີວອນ ຜືນນັ້ນ ເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ ຈະກັບ" ແລ້ວກັບມາທັນກະຖິນເດາະ ການ ເດາະກະຖິນຂອງພິກຂຸນັ້ນ ຊື່ວ່າເດາະພ້ອມກັນກັບພິກຂຸທັງຫຼາຍ (໗)

**ອາຫາຍະສັດຕະກະ ທີ ໑ ຈົບ**

## ໑໗໘. ສະມາທາຍະສັດຕະກະ

## ວ່າດ້ວຍການເດາະກະຖິນດ້ວຍການນຳຈີວອນຕິດໂຕຫຼີກໄປ ໆ ກຳລະນີ

[໓໑໒] ພິກຂຸການກະຖິນແລ້ວນຳຈີວອນທີ່ເຮັດສຳເລັດແລ້ວຫຼີກໄປຄິດວ່າ "ຈະບໍ່ກັບ" ການ ເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຫຼີກໄປ (໑)

ພິກຂຸການກະຖິນແລ້ວນຳຈີວອນຫຼີກໄປ ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ທີ່ນອກສີມານີ້ແລ້ວ ບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໘)

ພິກຂຸການກະຖິນແລ້ວນຳຈີວອນຫຼີກໄປ ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໙)

ພິກຂຸການກະຖິນແລ້ວນຳຈີວອນຫຼີກໄປ ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໔)

ພິກຂຸການກະຖິນແລ້ວນຳຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາ ໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍໄດ້ຮູ້ຂ່າວ (໕)

ພິກຂຸການກະຖິນແລ້ວນຳຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາ ໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ" ແລ້ວລ່ວງເວລາກະຖິນເດາະທີ່ນອກສີມາ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍລ່ວງເຂດ (໖)

ພິກຂຸການກະຖິນແລ້ວນຳຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາ ໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ" ແລ້ວກັບມາທັນກະຖິນເດາະ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າເດາະພ້ອມກັນກັບພິກຂຸທັງຫຼາຍ (໗)

**ສະມາທາຍະສັດຕະກະ ທີ ໘ ຈົບ**

## ໑໗໐. ອາທາຍະສັກກະ

## ວ່າດ້ວຍການເດາະກະຖິນດ້ວຍການຖືຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ໖ ກໍລະນີ

[໓໑໙] ພິກຂຸການກະຖິນແລ້ວ ຖືຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ທີ່ນອກສີມານີ້ແລ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໑)

ພິກຂຸການກະຖິນແລ້ວ ຖືຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ຢູ່ນອກສີມາມີຄວາມຄິດແບບນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນຜືນນັ້ນ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໒)

ພິກຂຸການກະຖິນແລ້ວ ຖືຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ຢູ່ນອກສີມາມີຄວາມຄິດແບບນີ້ວ່າ "ຈະໃຫ້ເຮັດຈີວອນຜືນນີ້ທີ່ນອກສີມານີ້ແລ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ຈີວອນທີ່ທ່ານໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໓)

ພິກຂຸການກະຖິນແລ້ວ ຖືຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍໄດ້ຮູ້ຂ່າວ (໔)

ພິກຂຸການກະຖິນແລ້ວ ຖືຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ ຈະກັບ" ແລ້ວລ່ວງເວລາກະຖິນເດາະ ນອກສີມາ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍລ່ວງເຂດ (໕)

ພິກຂຸການກະຖິນແລ້ວ ຖືຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ ຈະກັບ" ແລ້ວກັບມາທັນກະຖິນເດາະ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າເດາະພ້ອມກັນກັບພິກຂຸທັງຫຼາຍ (໖)

**ອາທາຍະສັກກະ ທີ ໓ ຈົບ**

## ໑໗໑. ສະມາທາຍະສັກກະ

## ວ່າດ້ວຍການເດາະກະຖິນດ້ວຍການນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ໖ ກໍລະນີ

[໓໑໔] ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ຢູ່ນອກສີມາມີຄວາມຄິດແບບນີ້ວ່າ "ຈະໃຫ້ເຮັດຈີວອນນີ້ທີ່ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໑)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ຢູ່ນອກສີມາມີຄວາມຄິດແບບນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນຜືນນັ້ນ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໒)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນຜືນນີ້ທີ່ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໓)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍໄດ້ຮູ້ຂ່າວ (໔)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ ຈະກັບ" ແລ້ວລ່ວງເວລາກະຖິນເດາະນອກສີມາ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍລ່ວງເຂດ (໕)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວ ຄິດວ່າ "ຈະກັບ ຈະກັບ" ແລ້ວກັບມາທັນກະຖິນເດາະ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າເດາະພ້ອມກັນກັບພິກຂຸທັງຫຼາຍ (໖)

**ສະມາທາຍະສັກກະ ທີ ໔ ຈົບ**

## ໑໗໘. ອາທາຍະປັນນະຣະສະກະ

## ວ່າດ້ວຍການເດາະກະຖິນດ້ວຍການຖືຈີວອນຫຼີກໄປ ໑໕ ກໍລະນີ

[໓໑໕] ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປ ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໑)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປ ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໒)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປ ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໓)

**ຕິກະທີ ໑ ຈົບ**

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໔)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໕)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໖)

## ຕິກະທີ ໔ ຈົບ

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປໂດຍບໍ່ຕັ້ງໃຈ[១] ບໍ່ໄດ້ຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໗)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປໂດຍບໍ່ຕັ້ງໃຈ ບໍ່ໄດ້ຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໘)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປໂດຍບໍ່ຕັ້ງໃຈ ບໍ່ໄດ້ຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໙)

## ຕິກະທີ ໕ ຈົບ

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໑໐)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາມີຄວາມຄິດແນວນີ້ ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໑໑)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາມີຄວາມຄິດແນວນີ້ ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໑໒)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍໄດ້ຮູ້ຂ່າວ (໑໓)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ ຈະກັບ" ແລ້ວລ່ວງເວລາກະຖິນເດາະນອກສີມາ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍລ່ວງເຂດ (໑໔)

ພິກຂຸການກະຖິນແລ້ວ ຖືຈີວອນຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນຜືນນັ້ນ ເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ ຈະກັບ" ແລ້ວກັບມາທັນກະຖິນເດາະ ການເດາະກະຖິນ ຂອງພິກຂຸນັ້ນ ຊື່ວ່າເດາະພ້ອມກັນກັບພິກຂຸທັງຫຼາຍ (໑໕)

**ສັກກະ ຈົບ**

**ອາຫາຍະປັນນະຣະສະກະ ຈົບ**

## ໑໙໓. ສະມາທາຍະປັນນະຣະສະກາທິ

## ວ່າດ້ວຍການເດາະກະຖິນດ້ວຍການນຳຈີວອນຕິດໂຕຫຼີກໄປ ໑໕ ກໍລະນີເປັນຕົ້ນ

[໓໑໖] ພິກຂຸການກະຖິນແລ້ວ ນຳຈີວອນຫຼີກໄປ ฯລฯ

(ພຣະວິໄນທອນເພີ່ງຂະຫຍາຍຄວາມໃຫ້ພິດສະດານແນວນີ້ ຄືວາຣະທີ່ວ່າດ້ວຍເລື້ອງການເດາະກະຖິນກຳນົດດ້ວຍຖືຈີວອນຫຼີກໄປ)

ພິກຂຸການກະຖິນແລ້ວ ຖືຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ຢູ່ນອກສີມາ ມີຄວາມຄິດແນວນີ້ ວ່າ "ຈະໃຫ້ເຮັດຈີວອນຜືນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ ฯລฯ

(ພຣະວິໄນທອນເພີ່ງຂະຫຍາຍຄວາມໃຫ້ພິດສະດານແນວນີ້ ຄືວາຣະທີ່ວ່າດ້ວຍເລື້ອງການເດາະກະຖິນກຳນົດດ້ວຍຖືຈີວອນທີ່ເຮັດຄ້າງໄວ້ຫຼີກໄປ)

# ໑໙໔. ວິບປະກະຕະສະມາທາຍະປັນນະຣະສະກະ

## ວ່າດ້ວຍການເດາະກະຖິນດ້ວຍການນຳຈີວອນທີ່ເຮັດຄ້າງໄວ້ຕິດໂຕຫຼີກໄປ ໑໕ ກໍລະນີ

[໓໑໗] ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໑)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໒)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປ ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໓)

**ຕິກະທີ ໑ ຈົບ**

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໔)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໕)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໖)

**ຕິກະທີ ໒ ຈົບ**

ພິກຂຸການກະຖິນແລ້ວ ນໍາຈີວອນທີ່ເຮັດຄ້າງໄວ້ຫຼີກໄປໂດຍບໍ່ຕັ້ງໃຈ ບໍ່ໄດ້ຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກໍານົດດ້ວຍເຮັດຈີວອນສໍາເລັດ (໗)

ພິກຂຸການກະຖິນແລ້ວ ນໍາຈີວອນທີ່ເຮັດຄ້າງໄວ້ຫຼີກໄປໂດຍບໍ່ຕັ້ງໃຈ ບໍ່ໄດ້ຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກໍານົດດ້ວຍຕົກລົງໃຈ (໘)

ພິກຂຸການກະຖິນແລ້ວ ນໍາຈີວອນທີ່ເຮັດຄ້າງໄວ້ຫຼີກໄປໂດຍບໍ່ຕັ້ງໃຈ ຄື ທ່ານບໍ່ໄດ້ຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນຜືນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກໍານົດດ້ວຍຜ້າເສຍຫາຍ (໙)

**ຕິກະທີ ໓ ຈົບ**

ພິກຂຸການກະຖິນແລ້ວ ນໍາຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກໍານົດດ້ວຍເຮັດຈີວອນສໍາເລັດ (໑໐)

ພິກຂຸການກະຖິນແລ້ວ ນໍາຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກໍານົດດ້ວຍຕົກລົງໃຈ (໑໑)

ພິກຂຸການກະຖິນແລ້ວ ນໍາຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກໍານົດດ້ວຍຜ້າເສຍຫາຍ (໑໒)

ພິກຂຸການກະຖິນແລ້ວ ນໍາຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນນັ້ນ ເຮັດຈີວອນສໍາເລັດແລ້ວໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກໍານົດດ້ວຍໄດ້ຮູ້ຂ່າວ (໑໓)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນນັ້ນ ທ່ານເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ ຈະກັບ" ແລ້ວລ່ວງເວລາກະຖິນເດາະນອກສີມາ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍລ່ວງເຂດ (໑໔)

ພິກຂຸການກະຖິນແລ້ວ ນຳຈີວອນທີ່ເຮັດຄ້າງໄວ້ຫຼີກໄປຄິດວ່າ "ຈະກັບ" ຢູ່ນອກສີມາໃຫ້ເຮັດຈີວອນນັ້ນ ທ່ານເຮັດຈີວອນສຳເລັດແລ້ວຄິດວ່າ "ຈະກັບ ຈະກັບ" ແລ້ວກັບມາທັນກະຖິນເດາະ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າເດາະພ້ອມກັນກັບພິກຂຸທັງຫຼາຍ (໑໕)

**ສັກກະ ຈົບ**

**ສະມາທາຍະປັນນະຣະສະກະ ຈົບ**

**ອາທາຍະພານະວານ ຈົບ**

## ໑໗໕. ອະນາສາໂທລະສະກະ

## ວ່າດ້ວຍການເດາະກະຖິນຍ້ອນຄວາມສິ້ນຫວັງ ໑໔ ກໍລະນີ

[໓໑໗] ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຢູ່ນອກສີມາ ເຂົ້າໄປຍັງທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໑)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນຢູ່ນອກສີມາ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໒)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນຢູ່ນອກສີມາ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໓)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນີ້ແລ້ວ ຈະບໍ່ກັບ" ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ຄວາມຫວັງວ່າຈະໄດ້ຈີວອນນັ້ນຂອງທ່ານສິ້ນສຸດລົງ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍສິ້ນຫວັງ (໔)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໕)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໖)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະໄປບໍ່ກັບ" ຢູ່ນອກສີມາເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໗)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະເຂົ້າໄປສູ່ທີ່ເຊິ່ງມີຫວັງຈະໄດ້ເຮັດຈີວອນນອກສີມານີ້ແລ້ວ" ເຂົ້າໄປສູ່ທີ່ເຊິ່ງມີຫວັງຈະໄດ້ເຮັດຈີວອນນັ້ນ ຄວາມຫວັງວ່າຈະໄດ້ຈີວອນນັ້ນຂອງທ່ານສິ້ນສຸດລົງ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍສິ້ນຫວັງ (໘)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນໂດຍບໍ່ຕັ້ງໃຈ ບໍ່ໄດ້ມີຄວາມຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ມີຄວາມຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ເຂົ້າໄປສູ່ທີ່ເຊິ່ງມີຫວັງຈະໄດ້ເຮັດຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າ ກຳນົດດ້ວຍເຮັດຈີວອນສຳເລັດ (໙)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງຈະໄດ້ຈີວອນໂດຍບໍ່ຕັ້ງໃຈ ບໍ່ໄດ້ມີຄວາມຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ມີຄວາມຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ເຂົ້າໄປສູ່ທີ່ເຊິ່ງມີຫວັງຈະໄດ້ເຮັດຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໑໐)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນໂດຍບໍ່ຕັ້ງໃຈ ບໍ່ໄດ້ມີຄວາມຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ມີຄວາມຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້

ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໑໑)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງຈະໄດ້ຈີວອນໂດຍບໍ່ຕັ້ງໃຈ ບໍ່ໄດ້ມີຄວາມຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ມີຄວາມຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ເຂົ້າໄປສູ່ທີ່ເຊິ່ງມີຫວັງ ວ່າຈະໄດ້ຈີວອນ ຄວາມຫວັງວ່າຈະໄດ້ຈີວອນນັ້ນຂອງພິກຂຸນັ້ນສິ້ນສຸດລົງ ການເດາະກະຖິນຂອງພິກຂຸນັ້ນຊື່ວ່າກຳນົດດ້ວຍສິ້ນຫວັງ (໑໔)

**ອະນາສາໂທລະສະກະ ຈົບ**

## ໑໗໓. ອາສາໂທລະສະກະ

## ວ່າດ້ວຍການເດາະກະຖິນຍ້ອນຄວາມສົມຫວັງ ໑໔ ກໍລະນີ

[໓໑໗] ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນ ໄດ້ຕາມທີ່ຫວັງ ບໍ່ຜິດຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໑)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນ ໄດ້ຕາມທີ່ຫວັງ ບໍ່ຜິດຫວັງ ມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍ ຕົກລົງໃຈ (໔)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນ ໄດ້ຕາມທີ່ຫວັງ ບໍ່ຜິດຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໓)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາມີຄວາມຄິດແນວນີ້ວ່າ "ຈະເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນອກສີມານີ້ແລ້ວ ຈະບໍ່ກັບ" ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ຄວາມຫວັງທີ່ຈະໄດ້ຈີວອນນັ້ນຂອງພິກຂຸນັ້ນສິ້ນສຸດລົງ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍສິ້ນຫວັງ (໔)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ມີຄວາມຄິດແນວນີ້ວ່າ "ຍ້ອນໃນອາວາດນັ້ນກະຖິນເດາະສາແລ້ວ ຈະໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນອກສີມານີ້ແລ້ວ"

ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ໄດ້ຕາມທີ່ຫວັງ ບໍ່ຜິດຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໕)

ພິກຂຸການກະຖິນແລ້ວ ຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ມີຄວາມຄິດແນວນີ້ວ່າ "ຍ້ອນໃນອາວາດນັ້ນກະຖິນເດາະສາແລ້ວ ຈະໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນອກສີມານີ້ແລ້ວ" ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ໄດ້ຕາມທີ່ຫວັງ ບໍ່ຜິດຫວັງ ມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໖)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ມີຄວາມຄິດແນວນີ້ວ່າ "ຍ້ອນໃນອາວາດນັ້ນກະຖິນເດາະສາແລ້ວ ຈະໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນອກສີມານີ້ແລ້ວ" ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ໄດ້ຕາມທີ່ຫວັງ ບໍ່ຜິດຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໗)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ມີຄວາມຄິດແນວນີ້ວ່າ "ຍ້ອນໃນອາວາດນັ້ນກະຖິນເດາະສາແລ້ວ ຈະເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນອກສີມານີ້ແລ້ວ ຈະບໍ່ກັບ" ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນ ແຕ່ຄວາມຫວັງວ່າຈະໄດ້ຈີວອນນັ້ນຂອງພິກຂຸນັ້ນສິ້ນສຸດລົງ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍສິ້ນຫວັງ (໘)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ໄດ້ຕາມທີ່ຫວັງ ບໍ່ຜິດຫວັງ ໃຫ້ເຮັດຈີວອນນັ້ນ ເຮັດຈີວອນສຳເລັດແລ້ວ ໄດ້ຮູ້ຂ່າວວ່າ "ໃນອາວາດນັ້ນກະຖິນເດາະສາແລ້ວ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍໄດ້ຮູ້ຂ່າວ (໙)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາ ມີຄວາມຄິດແນວນີ້ວ່າ "ຈະເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ"

ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນ ແຕ່ຄວາມຫວັງວ່າຈະໄດ້ຈີວອນນັ້ນຂອງພິກຂຸນັ້ນສິ້ນສຸດລົງ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍສິ້ນຫວັງ (໑໐)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ໄດ້ຕາມທີ່ຫວັງ ບໍ່ຜິດຫວັງ ໃຫ້ເຮັດຈີວອນນັ້ນ ເຮັດຈີວອນສຳເລັດແລ້ວ ຄິດວ່າ "ຈະກັບ ຈະກັບ" ລ່ວງເວລາກະຖິນເດາະນອກສີມາ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍລ່ວງເຂດ (໑໑)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍຫວັງວ່າຈະໄດ້ຈີວອນ ຄິດວ່າ "ຈະກັບ" ຢູ່ນອກສີມາເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ໄດ້ຕາມທີ່ຫວັງ ບໍ່ຜິດຫວັງ ໃຫ້ເຮັດຈີວອນນັ້ນ ເຮັດຈີວອນສຳເລັດແລ້ວ ຄິດວ່າ "ຈະກັບ ຈະກັບ" ກັບມາທັນກະຖິນເດາະ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າເດາະພ້ອມກັນກັບພິກຂຸທັງຫຼາຍ (໑໒)

**ອາສາໂທລະສະກະ ຈົບ**

## ໑໙. ກະຣະນີຍະໂທລະສະກະ

## ວ່າດ້ວຍການເດາະກະຖິນຍ້ອນມີທຸລະຈຳເປັນ ໑໒ ກໍລະນີ

[໖໒໐] ພິກຂຸການກະຖິນແລ້ວຫຼີກໄປດ້ວຍທຸລະຈຳເປັນບາງຢ່າງ ຢູ່ນອກສີມາ ເກີດຄວາມຫວັງວ່າຈະໄດ້ຈີວອນ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໑)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍທຸລະຈຳເປັນບາງຢ່າງ ຢູ່ນອກສີມາ ເກີດຄວາມຫວັງວ່າຈະໄດ້ຈີວອນ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້ ຈະບໍ່ກັບ" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໒)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍທຸລະຈຳເປັນບາງຢ່າງ ຢູ່ນອກສີມາ ເກີດຄວາມຫວັງວ່າຈະໄດ້ຈີວອນ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າເສຍຫາຍ (໓)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍທຸລະຈຳເປັນບາງຢ່າງ ຢູ່ນອກສີມາ ເກີດຄວາມຫວັງວ່າຈະໄດ້ຈີວອນ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະເຂົ້າໄປສູ່ທີ່ເຊິ່ງຫວັງວ່າຈະໄດ້ຈີວອນນອກສີມານີ້ແລ້ວ ຈະບໍ່ກັບ" ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນ ແຕ່ຄວາມຫວັງວ່າຈະໄດ້ຈີວອນນັ້ນຂອງພິກຂຸນັ້ນສິ້ນສຸດລົງ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍສິ້ນຫວັງ (໔)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍທຸລະຈຳເປັນບາງຢ່າງ ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາເກີດຄວາມຫວັງວ່າຈະໄດ້ຈີວອນ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໕)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍທຸລະຈຳເປັນບາງຢ່າງ ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ເກີດຄວາມຫວັງວ່າຈະໄດ້ຈີວອນ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະບໍ່ໃຫ້ເຮັດຈີວອນນີ້" ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຕົກລົງໃຈ (໖)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍທຸລະຈຳເປັນບາງຢ່າງ ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ເກີດຄວາມຫວັງວ່າຈະໄດ້ຈີວອນ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ" ທ່ານໃຫ້ເຮັດຈີວອນນັ້ນ ຈີວອນທີ່ພິກຂຸນັ້ນໃຫ້ເຮັດຢູ່ນັ້ນເກີດເສຍຫາຍ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍຜ້າທີ່ເສຍຫາຍ (໗)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍທຸລະຈຳເປັນບາງຢ່າງ ຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ເກີດຄວາມຫວັງວ່າຈະໄດ້ຈີວອນ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນີ້ ນອກສີມານີ້ແລ້ວ" ເຂົ້າໄປສູ່ທີ່ເຊິ່ງຫວັງວ່າຈະໄດ້ຈີວອນນັ້ນ ແຕ່ຄວາມຫວັງວ່າຈະໄດ້ຈີວອນນັ້ນ ຂອງພິກຂຸນັ້ນສິ້ນສຸດລົງ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍສິ້ນຫວັງ (໘)

ພິກຂຸການກະຖິນແລ້ວຫຼີກໄປດ້ວຍທຸລະຈຳເປັນບາງຢ່າງໂດຍບໍ່ຕັ້ງໃຈ ບໍ່ໄດ້ມີຄວາມຄິດວ່າ "ຈະກັບ" ແຕ່ກໍບໍ່ໄດ້ມີຄວາມຄິດວ່າ "ຈະບໍ່ກັບ" ຢູ່ນອກສີມາ ເກີດຄວາມຫວັງວ່າຈະໄດ້ຈີວອນ ເຂົ້າໄປສູ່ທີ່ເຊິ່ງມີຫວັງວ່າຈະໄດ້ຈີວອນນັ້ນ ແຕ່ໄດ້ບໍ່ສົມຫວັງ ບໍ່ໄດ້ຕາມຫວັງ ມີຄວາມຄິດແນວນີ້ວ່າ "ຈະໃຫ້ເຮັດຈີວອນນີ້ນອກສີມານີ້ແລ້ວ ຈະບໍ່ກັບ" ໃຫ້ເຮັດຈີວອນນັ້ນ ການເດາະກະຖິນຂອງພິກຂຸນັ້ນ ຊື່ວ່າກຳນົດດ້ວຍເຮັດຈີວອນສຳເລັດ (໙)

ພວກໄດ້ຜ້າບັງສຸກຸນຕອບວ່າ "ພວກເຮົາບໍ່ໃຫ້ສ່ວນແບ່ງແກ່ພວກທ່ານ ເປັນຫຍັງທ່ານແວ່ໄປພາຍຫຼັງນໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ບໍ່ຕ້ອງການບໍ່ຕ້ອງໃຫ້ສ່ວນແບ່ງແກ່ພິກຂຸທີ່ແວ່ເຂົ້າໄປພາຍຫຼັງ"

ສະໄໝນັ້ນ ພິກຂຸຫຼາຍອົງເດີນທາງໄກໄປໃນແຄວ້ນໂກສົນ ພ້ອມກັນແວ່ເຂົ້າປ່າຊ້າເພື່ອຫາຜ້າບັງສຸກຸນ ລາງພວກໄດ້ຜ້າບັງສຸກຸນ ລາງພວກບໍ່ໄດ້ຜ້າ ພວກທີ່ບໍ່ໄດ້ຜ້າເວົ້າແນວນີ້ວ່າ "ທ່ານທັງຫຼາຍ ໂຜດໃຫ້ສ່ວນແບ່ງພວກເຮົາແດ່"

ພວກໄດ້ຜ້າບັງສຸກຸນຕອບວ່າ "ພວກເຮົາບໍ່ໃຫ້ສ່ວນແບ່ງແກ່ພວກທ່ານ ເປັນຫຍັງພວກທ່ານຫາບໍ່ໄດ້ນໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ບໍ່ຕ້ອງການກໍຕ້ອງໃຫ້ສ່ວນແບ່ງແກ່ພິກຂຸທີ່ແວ່ເຂົ້າໄປພ້ອມກັນ"

ສະໄໝນັ້ນ ພິກຂຸຫຼາຍອົງເດີນທາງໄກໄປໃນແຄວ້ນໂກສົນ ນັດກັນແວ່ເຂົ້າປ່າຊ້າເພື່ອຫາຜ້າບັງສຸກຸນ ລາງພວກໄດ້ຜ້າບັງສະກຸນ ລາງພວກບໍ່ໄດ້ຜ້າ ພວກທີ່ບໍ່ໄດ້ຜ້າເວົ້າແນວນີ້ວ່າ "ທ່ານທັງຫຼາຍໂຜດໃຫ້ສ່ວນແບ່ງພວກເຮົາແດ່"

ພວກໄດ້ຜ້າບັງສຸກຸນຕອບວ່າ "ພວກເຮົາບໍ່ໃຫ້ສ່ວນແບ່ງແກ່ພວກທ່ານ ເປັນຫຍັງພວກທ່ານຫາບໍ່ໄດ້ນໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸຜູ້ບໍ່ຕ້ອງການກໍຕ້ອງໃຫ້ສ່ວນແບ່ງແກ່ພິກຂຸທີ່ນັດກັນແວ່ເຂົ້າໄປ"

## ໔໑໕. ຈີວະຣະປະຕິກຄາຫະກະສຳມະຕິກະຖາ

## ວ່າດ້ວຍການແຕ່ງຕັ້ງພິກຂຸເປັນເຈົ້າໜ້າທີ່ຮັບຈີວອນ

## ເລື້ອງທາຍົກນຳຈີວອນກັບຄືນ

[໕໔໔] ສະໄໝນັ້ນ ຄົນທັງຫຼາຍຖືຈີວອນມາສູ່ອາຣາມ ຫາພິກຂຸຜູ້ເປັນເຈົ້າໜ້າທີ່ຮັບ ບໍ່ໄດ້ຈຶ່ງນຳຈີວອນກັບໄປ ຈີວອນຈຶ່ງເກີດແກ່ພິກຂຸໜ້ອຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໕ ຢ່າງເປັນເຈົ້າໜ້າທີ່ຮັບຈີວອນ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ຈັກຈີວອນທີ່ຮັບໄວ້ແລະຈີວອນທີ່ຍັງບໍ່ໄດ້ຮັບໄວ້

## ວິທີແຕ່ງຕັ້ງແລະກຳມະວາຈາແຕ່ງຕັ້ງພິກຂຸເປັນເຈົ້າໜ້າທີ່ຮັບຈີວອນ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແນວນີ້ ຄື ໃນເບື້ອງຕົ້ນຕ້ອງຂໍຮ້ອງພິກຂຸ ຈາກນັ້ນ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມກັນແລ້ວ ສົງເພິ່ງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ຮັບຈີວອນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ຮັບຈີວອນ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ຮັບຈີວອນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ຮັບຈີວອນແລ້ວ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

ກໍສະໄໝນັ້ນ ພວກພິກຂຸຜູ້ເປັນເຈົ້າໜ້າທີ່ຮັບຈີວອນ ຮັບຈີວອນແລ້ວຖິ້ມໄວ້ໃນບ່ອນນັ້ນເອງແລ້ວຫຼີກໄປ ຈີວອນຈຶ່ງເສຍຫາຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໕ ຢ່າງ ເປັນເຈົ້າໜ້າທີ່ມ້ຽນຈີວອນ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ຈັກຈີວອນທີ່ມ້ຽນໄວ້ແລະຈີວອນທີ່ຍັງບໍ່ໄດ້ມ້ຽນໄວ້"

## ວິທີແຕ່ງຕັ້ງແລະກຳມະວາຈາແຕ່ງຕັ້ງພິກຂຸເປັນເຈົ້າໜ້າທີ່ມ້ຽນຈີວອນ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແບບນີ້ ຄື ໃນເບື້ອງຕົ້ນຕ້ອງຂໍຮ້ອງພິກຂຸ ຈາກນັ້ນ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວ ສົງເພິ່ງແຕ່ງຕັ້ງພິກຂຸ ຊື່ນີ້ໃຫ້ເປັນເຈົ້າໜ້າທີ່ມ້ຽນຈີວອນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸນີ້ໃຫ້ເປັນເຈົ້າໜ້າທີ່ມ້ຽນຈີວອນ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ມ້ຽນຈີວອນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ມ້ຽນຈີວອນແລ້ວ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້"

## ໘໑໔. ພັນທາຄາຣະສຳມະຕິອາທິກະຖາ
## ວ່າດ້ວຍການສົມມຸດເຮືອນຄັງເປັນຕົ້ນ
## ເລື້ອງສົມມຸດເຮືອນຄັງ

[໓໔໓] ສະໄໝນັ້ນ ພວກພິກຂຸຜູ້ເປັນເຈົ້າໜ້າທີ່ມ້ຽນຈີວອນ ໄດ້ມ້ຽນຈີວອນໄວ້ໃນມົນດົບແດ່ ທີ່ເຫງົ້າໄມ້ແດ່ ທີ່ຊາຍຄາແດ່ ທີ່ກາງແຈ້ງແດ່ ຈີວອນຖືກໜູແລະປວກກັດກິນ

ພິກຂຸທັງຫຼາຍນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົມມຸດເຮືອນຄັງທີ່ສົງຈຳນົງຫວັງຄື ວິຫານ ເຮືອນມຸງແຖບດຽວ ຜາສາດ ເຮືອນໂລ້ນ ຫຼືຖ້ຳ

## ວິທີສົມມຸດແລະກຳມະວາຈາສົມມຸດເຮືອນຄັງ

ພິກຂຸທັງຫຼາຍ ສົງເພິ່ງສົມມຸດແບບນີ້ ຄື ໃນເບື້ອງຕົ້ນຕ້ອງຂໍຮ້ອງພິກຂຸ ຈາກນັ້ນ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວ ສົງເພິ່ງສົມມຸດວິຫານຊື່ນີ້ໃຫ້ເປັນເຮືອນຄັງ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງສົມມຸດວິຫານຊື່ນີ້ໃຫ້ເປັນເຮືອນຄັງ ທ່ານອົງໃດເຫັນດ້ວຍກັບການສົມມຸດວິຫານຊື່ນີ້ໃຫ້ເປັນເຮືອນຄັງ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສົງສົມມຸດວິຫານຊື່ນີ້ໃຫ້ເປັນເຮືອນຄັງແລ້ວ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

## ເລື້ອງເຈົ້າໜ້າທີ່ຮັກສາຜ້າໃນເຮືອນຄັງ

ສະໄໝນັ້ນ ຈີວອນໃນເຮືອນຄັງຂອງສົງບໍ່ມີຜູ້ເບິ່ງແຍງ
ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໕ ຢ່າງ ເປັນເຈົ້າໜ້າທີ່ຮັກສາເຮືອນຄັງ ຄື

໑. ບໍ່ລຳອຽງຍ້ອນຮັກ
໒. ບໍ່ລຳອຽງຍ້ອນຊັງ
໓. ບໍ່ລຳອຽງຍ້ອນຫຼົງ
໔. ບໍ່ລຳອຽງຍ້ອນຢ້ານ
໕. ຮູ້ຈັກຈີວອນທີ່ຮັກສາໄວ້ແລະຈີວອນທີ່ຍັງບໍ່ໄດ້ຮັກສາໄວ້

## ວິທີສົມມຸດແລະກຳມະວາຈາແຕ່ງຕັ້ງພິກຂຸໃຫ້ເປັນເຈົ້າໜ້າທີ່ເຮືອນຄັງ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແນວນີ້ ຄື ໃນເບື້ອງຕົ້ນຕ້ອງຂໍຮ້ອງພິກຂຸ ຈາກນັ້ນ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວ ສົງເພິ່ງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ຮັກສາເຮືອນຄັງ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ຮັກສາເຮືອນຄັງ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ຮັກສາເຮືອນຄັງ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ຮັກສາເຮືອນຄັງແລ້ວ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້"

## ເລື້ອງຊົງຫ້າມຍ້າຍເຈົ້າໜ້າທີ່ເຮືອນຄັງ

ສະໄໝນັ້ນ ພວກພິກຂຸສັບພັກຄີຍ້າຍເຈົ້າໜ້າທີ່ຮັກສາເຮືອນຄັງ
ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸຜູ້ເປັນເຈົ້າໜ້າທີ່ເຮືອນຄັງບໍ່ຄວນໃຫ້ຍ້າຍ ພິກຂຸໃດໃຫ້ຍ້າຍ ຕ້ອງອາບັດທຸກກົດ"

## ເລື້ອງຈີວອນເກີດຂຶ້ນຫຼາຍ

ກໍສະໄໝນັ້ນ ໃນເຮືອນຄັງຂອງສົງມີຈີວອນຢູ່ຫຼາຍ
ພິກຂຸທັງຫຼາຍ ຈຶ່ງນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົງຜູ້ຢູ່ພ້ອມໜ້າ
ແຈກຈີວອນກັນໄດ້"

## ເລື້ອງສົ່ງສຽງດັງຂະນະແຈກຈີວອນ

ສະໄໝນັ້ນ ເມື່ອສົງທັງໝົດກໍາລັງແຈກຈີວອນ ໄດ້ເກີດສົ່ງສຽງຂຶ້ນ
ພິກຂຸທັງຫຼາຍຈຶ່ງ ນໍາເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ແຕ່ງຕັ້ງພິກຂຸຜູ້ມີຄຸນສົມບັດ ໕ ຢ່າງ ເປັນເຈົ້າໜ້າທີ່ແຈກຈີວອນ ຄື

໑. ບໍ່ລໍາອຽງຍ້ອນຮັກ
໒. ບໍ່ລໍາອຽງຍ້ອນຊັງ
໓. ບໍ່ລໍາອຽງຍ້ອນຫຼົງ
໔. ບໍ່ລໍາອຽງຍ້ອນຢ້ານ
໕. ຮູ້ຈັກຈີວອນທີ່ແຈກແລະຈີວອນທີ່ຍັງບໍ່ໄດ້ແຈກ

## ວິທີແຕ່ງຕັ້ງແລະກໍາມະວາຈາແຕ່ງຕັ້ງພິກຂຸໃຫ້ເປັນເຈົ້າໜ້າທີ່ແຈກຈີວອນ

ພິກຂຸທັງຫຼາຍ ສົງເພິ່ງແຕ່ງຕັ້ງແບບນີ້ ຄື ໃນເບື້ອງຕົ້ນຕ້ອງຂໍຮ້ອງພິກຂຸ ຈາກນັ້ນ ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ (ດ້ວຍຍັດຕິທຸຕິຍະກໍາມະວາຈາ) ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຖ້າສົງພ້ອມແລ້ວ ສົງເພິ່ງແຕ່ງຕັ້ງພິກຂຸ
ຊື່ນີ້ໃຫ້ເປັນເຈົ້າໜ້າທີ່ແຈກຈີວອນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ແຈກຈີວອນ ທ່ານອົງໃດເຫັນດ້ວຍກັບການແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ແຈກຈີວອນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສົງແຕ່ງຕັ້ງພິກຂຸຊື່ນີ້ໃຫ້ເປັນເຈົ້າໜ້າທີ່ແຈກຈີວອນແລ້ວ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແບບນີ້"

## ເລື້ອງວິທີແຈກຈີວອນ

ສະໄໝນັ້ນ ພວກພິກຂຸຜູ້ເປັນເຈົ້າໜ້າທີ່ແຈກຈີວອນໄດ້ມີຄວາມຄິດດັ່ງນີ້ວ່າ "ຄວນແຈກຈີວອນ ແບບໃດນໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຄັດເລືອກຜ້າກ່ອນ ແລ້ວພິຈາລະນາຄິດຖົວສະເລ່ຍກັນ ນັບພິກຂຸແລ້ວມັດຜ້າເປັນມັດຕັ້ງສ່ວນຈີວອນໄວ້"

## ເລື້ອງວິທີໃຫ້ສ່ວນແບ່ງ

ສະໄໝນັ້ນ ພວກພິກຂຸຜູ້ເປັນເຈົ້າໜ້າທີ່ແຈກຈີວອນໄດ້ມີຄວາມຄິດດັ່ງນີ້ວ່າ "ເພິ່ງໃຫ້ສ່ວນຈີວອນ ແກ່ສາມະເນນແນວໃດ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ມອບແກ່ສາມະເນນ ເຄິ່ງສ່ວນ"[໑]

## ເລື້ອງໃຫ້ແລກສ່ວນຂອງຕົນ

ສະໄໝນັ້ນ ພິກຂຸອົງໜຶ່ງປະສົງຈະຟ້າວເດີນທາງໂດຍຈະຮັບສ່ວນຂອງຕົນໄປນຳ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ມອບສ່ວນຂອງຕົນ ແກ່ພິກຂຸຜູ້ຟ້າວເດີນທາງ"

## ເລື້ອງໃຫ້ສ່ວນພິເສດ

ສະໄໝນັ້ນ ພິກຂຸອົງໜຶ່ງປະສົງຈະຟ້າວເດີນທາງໄປກັບສ່ວນພິເສດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ມອບສ່ວນພິເສດໃນເມື່ອໃຫ້ສິ່ງທົດແທນ"

## ເລື້ອງວິທີໃຫ້ສ່ວນຈີວອນ

ສະໄໝນັ້ນ ພິກຂຸເຈົ້າໜ້າທີ່ແຈກຈີວອນໄດ້ມີຄວາມຄິດດັ່ງນີ້ວ່າ ເພິ່ງໃຫ້ສ່ວນຈີວອນ (ສ່ວນທີ່ບໍ່ພໍແຈກ) ແນວໃດນໍ ຄື ຈະໃຫ້ຕາມລຳດັບຜູ້ມາເຖິງຫຼືຕາມລຳດັບພັນສາ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົມຍອມສ່ວນທີ່ຂາດ ແລ້ວຈັບສະຫຼາກ"

# ໔໑໕. ຈີວະຣະຣະຊະນະກະຖາ

## ວ່າດ້ວຍນ້ຳຍ້ອມຈີວອນ

### ເລື້ອງຍ້ອມຈີວອນດ້ວຍມູນງົວ

[໓໔໔] ສະໄໝນັ້ນ ພວກພິກຂຸໃຊ້ມູນງົວແດ່ ດິນແດງແດ່ ຍ້ອມຈີວອນ ຈີວອນມີສີແຫຼ້

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດນ້ຳຍ້ອມ ໖ ຊະນິດ ຄື ນ້ຳຍ້ອມຈາກຮາກໄມ້ ນ້ຳຍ້ອມຈາກຕົ້ນໄມ້ ນ້ຳຍ້ອມຈາກເປືອກໄມ້ ນ້ຳຍ້ອມຈາກໃບໄມ້ ນ້ຳຍ້ອມຈາກດອກໄມ້ ແລະນ້ຳຍ້ອມຈາກໝາກໄມ້"

### ເລື້ອງຍ້ອມດ້ວຍນ້ຳເຢັນ

ສະໄໝນັ້ນ ພວກພິກຂຸໃຊ້ນ້ຳຍ້ອມທີ່ເຢັນຍ້ອມຈີວອນ ຈີວອນມີກິ່ນເໝັນສາບ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໝໍ້ຍ້ອມຂະໜາດນ້ອຍໄວ້ຕົ້ມນ້ຳຍ້ອມ"

### ເລື້ອງນ້ຳຍ້ອມລົ້ນ

#### ນ້ຳຍ້ອມລົ້ນອອກ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ມັດກະຕໍ້ກັນນ້ຳລົ້ນ"

### ເລື້ອງບໍ່ຮູ້ວ່ານ້ຳຍ້ອມເດືອດແລ້ວບໍຍັງບໍ່ເດືອດ

ສະໄໝນັ້ນ ພວກພິກຂຸບໍ່ຮູ້ວ່ານ້ຳຍ້ອມຕົ້ມເດືອດແລ້ວບໍຍັງບໍ່ເດືອດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຢົດຢາດນ້ຳລົງໃນນ້ຳ ຫຼືເທິງຫຼັງເລັບ"

### ເລື້ອງຍົກໝໍ້ນ້ຳຍ້ອມລົງ

ສະໄໝນັ້ນ ພວກພິກຂຸຍົກໝໍ້ນ້ຳຍ້ອມລົງເຮັດໝໍ້ກໍ່ງຕົກແຕກ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດກະບອຍຕັກນ້ຳຍ້ອມເປັນພາຊະນະມີດ້າມ"

## ເລື້ອງບໍ່ມີພາຊະນະສຳລັບຍ້ອມ

ສະໄໝນັ້ນ ພວກພິກຂຸບໍ່ມີພາຊະນະສຳລັບຍ້ອມ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດອ່າງແລະໝໍ້ໄວ້ສຳລັບຍ້ອມ"

## ເລື້ອງຍ່ອງຈີວອນໃນຖາດແລະໃນບາດ

ສະໄໝນັ້ນ ພວກພິກຂຸຍ່ອງຈີວອນລົງໃນຖາດແດ່ ໃນບາດແດ່ ຈີວອນໂປດຂາດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາງສຳລັບຍ້ອມ"

## ເລື້ອງຕາກຈີວອນເທິງພື້ນ

ສະໄໝນັ້ນ ພວກພິກຂຸຕາກຈີວອນເທິງພື້ນດິນ ຈີວອນເປື້ອນຝຸ່ນ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດເຄື່ອງຮອງເຮັດດ້ວຍຫຍ້າ"

## ເລື້ອງປວກກັດເຄື່ອງຮອງເຮັດດ້ວຍຫຍ້າ

ເຄື່ອງຮອງເຮັດດ້ວຍຫຍ້າຖືກປວກກັດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຮາວຈີວອນ ແລະສາຍຢຽກ"

## ເລື້ອງແຂວນຈີວອນພັບກາງ

ພວກພິກຂຸແຂວນຈີວອນພັບກາງ ນ້ຳຍ້ອມຍ້ອຍອອກຈາກຊາຍຈີວອນທັງສອງຂ້າງ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ມັດແຈຈີວອນໄວ້"

## ເລື້ອງຊາຍຈີວອນຂາດ

ຊາຍຈີວອນຂາດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດດ້າຍມັດແຈຈີວອນ”

## ເລື້ອງນ້ຳຍ້ອມຍ້ອຍອອກຈາກຊາຍຂ້າງດຽວ

ນ້ຳຍ້ອມຍ້ອຍອອກຈາກຊາຍຂ້າງດຽວ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຍ້ອມຈີວອນ ປີ້ນກັບໄປກັບມາ ແຕ່ເມື່ອຢາດນ້ຳຍັງຍ້ອຍບໍ່ຂາດສາຍ ຢ່າຟ້າວຫຼີກໄປ”

## ເລື້ອງຈີວອນແຂງ

ສະໄໝນັ້ນ ຈີວອນກາຍເປັນຜ້າເນື້ອແຂງ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຈຸ່ມລົງໃນນ້ຳ”

## ເລື້ອງຈີວອນຫຍາບກະດ້າງ

ສະໄໝນັ້ນ ຈີວອນເປັນຜ້າຫຍາບກະດ້າງ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ທຸບດ້ວຍຝາມື”

## ເລື້ອງພຣະສັບພັກຄີໃຊ້ຈີວອນທີ່ບໍ່ໄດ້ຕັດ

ສະໄໝນັ້ນ ພວກພິກຂຸສັບພັກຄີໃຊ້ຈີວອນທີ່ບໍ່ໄດ້ຕັດທີ່ຍ້ອມນ້ຳຝາດມີສີຄືງາຊ້າງ ຄົນທັງຫຼາຍຕຳໜິ ປະນາມ ໂພນທະນາວ່າ “ຄືຄະລືຫັດຜູ້ບໍຣິໂພກກາມ”

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ຈີວອນທີ່ບໍ່ໄດ້ຕັດ ພິກຂຸໃດ ໃຊ້ຕ້ອງອາບັດທຸກກົດ"

## ໔໑໖. ສິດທະກະຈີວະຣານຸຊານະນາ

## ວ່າດ້ວຍຊົງອະນຸຍາດຈີວອນຕັດ

## ເລື້ອງຕັດຈີວອນຕາມແບບຄັນນາ

[໓໔໕] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນະຄອນຣາດຊະຄືຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທັກຂິນາຄິຣີຊົນນະບົດ ທອດພຣະເນດເຫັນນາຂອງຊາວມະຄົດ ເຊິ່ງເຂົາພູນດິນເປັນຄັນນາສີ່ຫຼ່ຽມຈະຕຸຣັດ ກໍ່ຄັນນາຍາວທັງດ້ານຍາວແລະດ້ານກວ້າງ ຂັ້ນລະຫວ່າງດ້ວຍຄັນນາສັ້ນ ໆ ເຊື່ອມກັນຄືທາງສີ່ແຍກ ຕາມທີ່ເຊິ່ງຄັນນາຕັດຜ່ານກັນ ຮັບສັ່ງກັບທ່ານພຣະອານົນວ່າ "ອານົນ ທ່ານເຫັນນາຂອງຊາວມະຄົດເຊິ່ງເຂົາພູນດິນເປັນ

ຄັນນາສີ່ຫຼ່ຽມຍາວທັງດ້ານຍາວແລະດ້ານກວ້າງ ຂັ້ນລະຫວ່າງດ້ວຍຄັນນາສັ້ນ ໆ ເຊື່ອມກັນຄືທາງສີ່ແຍກ ຫຼື"

ທ່ານພຣະອານົນຂາບທູນວ່າ "ເຫັນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ທ່ານສາມາດເຮັດຈີວອນຂອງພິກຂຸໃຫ້ມີຮູບແນວນັ້ນໄດ້ບໍ"

ທ່ານພຣະອານົນຂາບທູນວ່າ "ສາມາດເຮັດໄດ້ ຂ້ານ້ອຍ"

ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ ທັກຂິນາຄິຣີຊົນນະບົດຕາມພຣະອັດທະຍາໄສແລ້ວ ສະເດັດກັບມາໃນເມືອງຣາດຊະຄືອີກ ຄັ້ງນັ້ນ ທ່ານພຣະອານົນຕັດຈີວອນສຳລັບພິກຂຸຫຼາຍອົງ ແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າໄດ້ຂາບທູນດັ່ງນີ້ວ່າ "ຂໍພຣະອົງໂຜດທອດພຣະເນດຈີວອນ ທີ່ຂ້າພຣະອົງເຮັດແລ້ວ ຂ້ານ້ອຍ"

## ຕັດສັນເສີນພຣະອານົນ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ອານົນເປັນບັນດິດ ພິກຂຸທັງຫຼາຍ ອານົນ ມີປັນຍາຫຼາຍ ທີ່ເຂົ້າໃຈຄວາມໝາຍທີ່ເຮົາກ່າວຫຍໍ້ ໆ ໄດ້ຢ່າງພິດສະດານ ທ່ານເຮັດຜ້າກຸຊິແດ່ ເຮັດຜ້າອັດຖະກຸສິແດ່ ເຮັດຜ້າມົນທົນແດ່ ເຮັດຜ້າອັດຖະມົນທົນແດ່ ເຮັດຜ້າວິວັດຕະແດ່ ເຮັດຜ້າອະນຸວິວັດຕະແດ່ ເຮັດຜ້າຄີເວີຍຍະກະແດ່ ເຮັດຜ້າຊັງເຄີຍຍະກະແດ່ ເຮັດຜ້າພາຫັນຕະແດ່[1]

ຈີວອນເປັນຜ້າທີ່ຕ້ອງຕັດ ເສົ້າໝອງຍ້ອນອາວຸດ ເໝາະແກ່ສະມະນະ ແລະພວກໂຈນບໍ່ຕ້ອງການ ພິກຂຸທັງຫຼາຍ ເຮົາອະນຸຍາດສັງຄາຕິຕັດ ອຸດຕະຣາສົງຕັດ ແລະອັນຕະຣະວາສົກຕັດ

## ໔໑໗. ຕິຈີວະຣານຸຊານະນາ

### ວ່າດ້ວຍການອະນຸຍາດໄຕຣຈີວອນ

### ເລື້ອງທອດພຣະເນດເຫັນພິກຂຸແບກທໍ່ຈີວອນ

[໓໔໓] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນະຄອນຣາດຊະຄຶຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປນະຄອນເວສາລີ ພຣະຜູ້ມີພຣະພາກເຈົ້າຊົງດຳເນີນທາງໄກລະຫວ່າງນະຄອນຣາດຊະຄຶຕໍ່ກັບນະຄອນເວສາລີ ໄດ້ທອດພຣະເນດເຫັນພິກຂຸໃນທຳວິໄນນີ້ຈຳນວນຫຼາຍຫອບຜ້າພະຣຸງພະຣັງແດ່ ທູນທໍ່ຜ້າທີ່ພັບດັງຟູກໄວ້ເທິງຫົວແດ່ ແບກຂຶ້ນບ່າແດ່ ຕັ້ງໃສ່ແອວຢ່າງມາ ເມື່ອທອດພຣະເນດເຫັນແລ້ວ ພຣະຜູ້ມີພຣະພາກເຈົ້າໄດ້ມີພຣະດຳຣິວ່າ "ໂມຄະບຸຣຸດເຫຼົ່ານີ້ໝົກມຸ້ນເພື່ອຄວາມມັກຫຼາຍໃນຈີວອນໂພດ ຢ່າຈັ່ງຊັ້ນເລີຍ ເຮົາຄວນກຳນົດເຂດແດນ ເຮົາຄວນກຳນົດກົດເກນໃນເລື້ອງຜ້າແກ່ພິກຂຸທັງຫຼາຍ" ແລ້ວສະເດັດຈາຣິກໄປໂດຍລຳດັບຈົນເຖິງນະຄອນເວສາລີ ປະທັບຢູ່ທີ່ໂຄຕະມະກະເຈດີ

ສະໄໝນັ້ນ ເປັນຍາມຄ່ຳຄືນທີ່ໜາວເຢັນໃນລະດູໜາວຢູ່ໃນໄລຍະເດືອນ ໓ ເດືອນ ໔ ພຣະຜູ້ມີພຣະພາກເຈົ້າຊົງຫົ່ມຈີວອນຜືນດຽວ ປະທັບນັ່ງຢູ່ກາງແຈ້ງຕະຫຼອດຣາຕີ ຂະນະທີ່ນ້ຳໝອກຕົກ ແຕ່ບໍ່ຊົງໜາວ ເມື່ອປະຖົມມະຍາມຜ່ານໄປຊົງຮູ້ສຶກໜາວ ຊົງຫົ່ມຈີວອນຜືນທີ ໔ ຈຶ່ງບໍ່ຊົງໜາວ ເມື່ອມັດຊິມະຍາມຜ່ານໄປ ຊົງຮູ້ສຶກໜາວ ຊົງຫົ່ມຈີວອນຜືນທີ ໓ ຈຶ່ງບໍ່ຊົງໜາວ ເມື່ອປັດສິມມະຍາມຜ່ານໄປ ຍາມອາລຸນແຫ່ງຣາຕີອັນເປັນເບື້ອງຕົ້ນແຫ່ງຄວາມສົດຊື່ນ ຊົງຮູ້ສຶກໜາວ ຊົງຫົ່ມຈີວອນຜືນທີ ໔ ຈຶ່ງບໍ່ຊົງໜາວ ແລ້ວຊົງພຣະດຳຣິວ່າ "ກຸນລະບຸດໃນທຳ ວິໄນນີ້ທີ່ເປັນຄົນມີປົກກະຕິໜາວ ຢ້ານຄວາມໜາວ ອາດຄອງຊີບຢູ່ໄດ້ດ້ວຍຜ້າ ໓ ຜືນ

ຢ່າຈັ່ງຊັ້ນເລີຍ ເຮົາຄວນກຳນົດເຂດແດນ ຄວນກຳນົດກົດເກນໃນເລື້ອງຜ້າ ເຮົາຄວນອະນຸຍາດຜ້າ ໓ ຜືນແກ່ພິກຂຸທັງຫຼາຍ"

### ເລື້ອງຊົງອະນຸຍາດໄຕຣຈີວອນ

ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາເດີນທາງໄກລະຫວ່າງນະຄອນຣາດຊະຄຶ

ກັບນະຄອນເວສາລີຕໍ່ກັນ ໄດ້ເຫັນພິກຂຸໃນທຳວິໄນນີ້ຈຳນວນຫຼາຍຫອບຜ້າພະຣຸງພະຣັງ ທູນທໍ່ຜ້າທີ່ພັບດັງຟູກໄວ້ເທິງຫົວ ແດ່ ແບກຂື້ນບ່າແດ່ ຕັ້ງໃສ່ແອວຢ່າງມາແດ່ ເມື່ອເຫັນແລ້ວ ເຮົາໄດ້ມີຄວາມຄິດດັ່ງນີ້ວ່າ ໂມຄະບຸຣຸດເຫຼົ່ານີ້ໝົກມຸ້ນເພື່ອຄວາມມັກຫຼາຍໃນຈີວອນໂພດ ຢ່າຈັ່ງຊັ້ນເລີຍ ເຮົາຄວນກຳນົດເຂດແດນ ເຮົາຄວນກຳນົດກົດເກນໃນ ເລື້ອງຜ້າແກ່ພິກຂຸທັງຫຼາຍ ຕໍ່ມາ ໃນຍາມຄ່ຳຄືນທີ່ໜາວເຢັນໃນລະດູໜາວຢູ່ໃນໄລຍະເດືອນ ๑ ເດືອນ ໔ ເຮົາຄອງຈີວອນຜືນດຽວນັ່ງຢູ່ກາງແຈ້ງຕະຫຼອດຣາຕີຂະນະທີ່ນ້ຳໝອກຕົກແຕ່ຍັງບໍ່ຮູ້ສຶກໜາວ ເມື່ອປະຖົມມະຍາມຜ່ານໄປຮູ້ສຶກໜາວ ທົ່ມຈີວອນຜືນທີ ໒ ຈຶ່ງບໍ່ໜາວ ເມື່ອມັດຊິມະຍາມຜ່ານໄປ ຮູ້ສຶກໜາວ ທົ່ມຈີວອນຜືນທີ ๓ ຈຶ່ງບໍ່ໜາວ ເມື່ອປັດສິມມະຍາມຜ່ານໄປ ຍາມອາລຸນແຫ່ງຣາຕີອັນເປັນເບື້ອງຕົ້ນແຫ່ງຄວາມສົດຊື່ນ ຮູ້ສຶກໜາວ ທົ່ມຈີວອນຜືນທີ ໔ ຈຶ່ງບໍ່ໜາວ ພິກຂຸທັງຫຼາຍ ເຮົາເອງໄດ້ມີຄວາມຄິດດັ່ງນີ້ວ່າ ກຸນລະບຸດໃນທຳວິໄນນີ້ ທີ່ເປັນຄົນມີປົກກະຕິໜາວ ຢ້ານຄວາມໜາວ ອາດຄອງຊີບຢູ່ໄດ້ດ້ວຍຜ້າ ๓ ຜືນ ຢ່າຈັ່ງຊັ້ນເລີຍ ເຮົາຄວນກຳນົດເຂດແດນ ເຮົາຄວນກຳນົດກົດເກນໃນເລື້ອງຜ້າແກ່ພິກຂຸທັງຫຼາຍ ເຮົາຄວນອະນຸຍາດຜ້າ ๓ ຜືນ ພິກຂຸທັງຫຼາຍ ເຮົາອະນຸຍາດໄຕຣຈີວອນ ຄື

ສັງຄາຕິ ໒ ຊັ້ນ ອຸດຕະຣາສົງຊັ້ນດຽວ ອັນຕະຣະວາສົກຊັ້ນດຽວ"

## ໔໑໘. ອະຕິເຣກະຈີວະຣະກະຖາ
## ວ່າດ້ວຍອະຕິເຣກຈີວອນ
## ເລື້ອງພຣະສັບພັກຄີຊົງອະຕິເຣກຈີວອນຊຸດອື່ນເຂົ້າບ້ານ

[໓໔໗] ສະໄໝນັ້ນ ພວກພິກຂຸສັບພັກຄີຮູ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດໄຕຣຈີວອນແລ້ວ" ຈຶ່ງໃຊ້ໄຕຣຈີວອນຊຸດໜຶ່ງເຂົ້າບ້ານ ໃຊ້ໄຕຣຈີວອນອີກຊຸດໜຶ່ງຢູ່ໃນອາຣາມ ໃຊ້ໄຕຣຈີວອນອີກຊຸດໜຶ່ງລົງອາບນ້ຳ ບັນດາພິກຂຸຜູ້ມັກໜ້ອຍສັນໂດດຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີຈຶ່ງຊົງອະຕິເຣກຈີວອນນໍ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຊົງອະຕິເຣກຈີວອນ ພິກຂຸໃດຊົງ ເພິ່ງປັບອາບັດຕາມທຳ"

ສະໄໝນັ້ນ ອະຕິເຣກຈີວອນເກີດຂຶ້ນແກ່ທ່ານພຣະອານົນ ທ່ານພຣະອານົນຕ້ອງການຈະຖວາຍອະຕິເຣກຈີວອນນັ້ນແກ່ທ່ານພຣະສາຣີບຸດ ແຕ່ທ່ານພຣະສາຣີບຸດຢູ່ເມືອງສາເກດ ບັດນັ້ນທ່ານພຣະອານົນ ໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດສິກຂາບົດໄວ້ວ່າ

ພິກຂຸບໍ່ເພິ່ງຊົງອະຕິເຣກຈີວອນ ກໍອະຕິເຣກຈີວອນນີ້ເກີດຂຶ້ນແກ່ເຮົາ ເຮົາຕ້ອງການຈະຖວາຍທ່ານພຣະສາຣີບຸດ ແຕ່ທ່ານຢູ່ທີ່ເມືອງສາເກດ ເຮົາຈະເພິ່ງປະຕິບັດແນວໃດນໍ"

ຄັ້ງນັ້ນ ທ່ານພຣະອານົນຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ອານົນ ອີກດົນປານໃດ ສາຣີບຸດຈະກັບມາ"

ທ່ານພຣະອານົນຂາບທູນວ່າ "ອີກ ໙ ມື້ ຫຼື ໑໐ ມື້ ຈຶ່ງຈະກັບມາ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຊົງອະຕິເຣກຈີວອນໄວ້ໄດ້ ໑໐ ມື້ເປັນຢ່າງຫຼາຍ"

## ເລື້ອງອະຕິເຣກຈີວອນເກີດຂຶ້ນ

ສະໄໝນັ້ນ ອະຕິເຣກຈີວອນເກີດຂຶ້ນແກ່ພວກພິກຂຸ ລຳດັບນັ້ນ ພິກຂຸທັງຫຼາຍໄດ້ມີຄວາມຄິດດັ່ງນີ້ວ່າ "ພວກເຮົາຈະປະຕິບັດໃນອະຕິເຣກຈີວອນແນວໃດ" ແລ້ວນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ວິກັບອະຕິເຣກຈີວອນ"

## ເລື້ອງຊົງອະນຸຍາດຜ້າຕາບເມື່ອອັນຕະຣະວາສົກຂາດຊອດ

[໓໔໗] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນະຄອນເວສາລີຕາມພຣະອັດທະຍາໄສແລ້ວສະເດັດຈາຣິກໄປທາງນະຄອນພາຣານະສີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນພາຣານະສີ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ ປ່າອິສິປະຕະນະມະຣຶຄະທາຍະວັນ ເຂດນະຄອນພາຣານະສີ

ຄັ້ງນັ້ນ ອັນຕະຣະວາສົກຂອງພິກຂຸອົງໜຶ່ງຂາດຊອດ ພິກຂຸນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດຜ້າ ໓ ຜືນ ຄື ສັງຄາຕິ ໒ ຊັ້ນ ອຸດຕະຣາສົງຊັ້ນດຽວ ອັນຕະຣະວາສົກຊັ້ນດຽວ ກໍອັນຕະຣະວາສົກຂອງເຮົາຜືນນີ້ຂາດຊອດ ຢ່າຈັ່ງຊັ້ນເລີຍ ເຮົາຄວນທາບຜ້າຕາບ ບໍລິເວນໂດຍຮອບຈະເປັນ ໒ ຊັ້ນ ສູນກາງເປັນຊັ້ນດຽວ" ຈຶ່ງໄດ້ທາບຜ້າຕາບ

ພຣະຜູ້ມີພຣະພາກເຈົ້າສະເດັດໄປຕາມເສນາສະນະ ທອດພຣະເນດເຫັນພິກຂຸນັ້ນກຳລັງທາບຜ້າຕາບຈຶ່ງສະເດັດເຂົ້າໄປຫາພິກຂຸທັງຫຼາຍຕັດດັ່ງນີ້ວ່າ "ທ່ານເຮັດຫຍັງພິກຂຸ"

ພິກຂຸນັ້ນຂາບທູນວ່າ "ຂ້າພຣະອົງກຳລັງທາບຜ້າຕາບ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ພິກຂຸ ດີແລ້ວທີ່ທ່ານທາບຜ້າຕາບ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ສຳລັບຜ້າໃໝ່ແລະຜ້າທຽມຜ້າໃໝ່ ເຮົາອະນຸຍາດສັງຄາຕິ ໒ ຊັ້ນ ອຸດຕະຣາສົງຊັ້ນດຽວ ອັນຕະຣະວາສົກຊັ້ນດຽວ ສຳລັບຜ້າທີ່ເກັບໄວ້ຄ້າງລະດູ ເຮົາອະນຸຍາດສັງຄາຕິ ໔ ຊັ້ນ ອຸດຕະຣາສົງ ໒ ຊັ້ນ ອັນຕະຣະວາສົກຊັ້ນດຽວ

ພິກຂຸເພິ່ງເຮັດອຸດສາຫະໃນຜ້າບັງສຸກຸນໄດ້ຕາມຕ້ອງການຫຼືໃນຜ້າທີ່ເກັບມາຈາກຮ້ານຕະຫຼາດ ພິກຂຸ ທັງຫຼາຍ ເຮົາອະນຸຍາດຜ້າຕາບ ການຊຸນ ຮັງດຸມ ລູກດຸມ ການເຮັດໃຫ້ແໜ້ນ"

## ໒໑໗. ວິສາຂາວັດຖຸ

### ວ່າດ້ວຍນາງວິສາຂາຂາບທູນຂໍພອນ

### ເລື້ອງຝົນຕົກພ້ອມກັນ ໔ ທະວີບ

[໓໔໙] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນະຄອນພາຣານະສີຕາມພຣະອັດທະຍາໄສແລ້ວ ສະເດັດຈາຣິກໄປທາງນະຄອນສາວັດຖີ ສະເດັດຈາຣິກໄປໂດຍລຳດັບ ຈົນເຖິງນະຄອນສາວັດຖີແລ້ວ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ ພຣະເຊຕະວັນ ອາຣາມຂອງອະນາຖະບິນດິກະເສດຖີ ໃນນະຄອນສາວັດຖີນັ້ນ

ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ຖວາຍອະພິວາດແລ້ວນັ່ງຢູ່ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ນາງວິສາຂາມິຄາຣະມາຕາເຫັນແຈ້ງຊວນໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ

ລຳດັບນັ້ນ ນາງວິສາຂາມິຄາຣະມາຕາ ຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າ ຊົງຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບເອົາໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍພຣະຜູ້ມີພຣະພາກເຈົ້າພ້ອມດ້ວຍພິກຂຸສົງໂຜດຮັບພັດຕາຫານຂອງຂ້ານ້ອຍ ເພື່ອຈະເລີນກຸສົນໃນມື້ອື່ນນີ້ເທີ້ນຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນໂດຍດຸດສະນີພາບ

ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາຮູ້ວ່າພຣະຜູ້ມີພຣະພາກເຈົ້າຊົງຮັບນິມົນແລ້ວ ຈິ່ງລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວຈາກໄປ

ເມື່ອຜ່ານຣາຕີນັ້ນ ກ້ອນເຟື້ອຝົນໃຫຍ່ຕັ້ງເຄົ້າຂຶ້ນໃນທະວີບທັງ ໔ ຕົກລົງມາຢ່າງໜັກ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ຝົນຕົກໃນເຊຕະວັນສັນໃດ ຕົກໃນທະວີບທັງ ໔ ກໍສັນນັ້ນ ພວກທ່ານຈົ່ງສົງນ້ຳດ້ວຍນ້ຳຝົນເທີ້ນ ນີ້ເປັນກ້ອນເຟື້ອຝົນໃຫຍ່ຄັ້ງສຸດທ້າຍທີ່ຕັ້ງເຄົ້າຂຶ້ນຕົກ (ພ້ອມກັນ) ໃນທະວີບທັງ ໔"

ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະພຸດທະດຳຣັດແລ້ວ ພາກັນເອົາຈີວອນວາງໄວ້ ສົງນ້ຳດ້ວຍນ້ຳຝົນ ລຳດັບນັ້ນ ນາງວິສາຂາມິຄາຣະມາຕາສັ່ງໃຫ້ຄົນກຽມຂອງຫຍ້ຳຂອງສັນອັນປະນີດແລ້ວສັ່ງສາວໃຊ້ວ່າ "ໄປເທີ້ນແມ່ສາວໃຊ້ ເຈົ້າໄປສູ່ອາຣາມແລ້ວບອກພັດຕະການວ່າ ເຖິງເວລາແລ້ວ ທ່ານຜູ້ຈະເລີນ ພັດຕາຫານສຳເລັດແລ້ວ"

ນາງທາສີຮັບຄຳແລ້ວໄປສູ່ອາຣາມ ເຫັນພວກພິກຂຸເອົາຈີວອນວາງໄວ້ ສົງນ້ຳດ້ວຍນ້ຳຝົນຢູ່ຄິດວ່າ "ບໍ່ມີພິກຂຸຢູ່ໃນອາຣາມ ມີແຕ່ພວກອາຊີວົກກຳລັງອາບນ້ຳດ້ວຍນ້ຳຝົນ"[១] ຈຶ່ງກັບໄປຫານາງວິສາຂາມິຄາຣະມາຕາ ໄດ້ກ່າວດັ່ງນີ້ວ່າ "ຍາແມ່ ບໍ່ມີພິກຂຸຢູ່ໃນອາຣາມ ມີແຕ່ພວກອາຊີວົກກຳລັງອາບນ້ຳດ້ວຍນ້ຳຝົນ"

ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາຜູ້ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ໄດ້ມີຄວາມຄິດດັ່ງນີ້ວ່າ "ພວກພຣະຜູ້ເປັນເຈົ້າຄົງເອົາຈີວອນວາງໄວ້ສົງນ້ຳດ້ວຍນ້ຳຝົນເປັນແນ່ ນາງທາສີຄົນນີ້ເປັນຄົນຈ້ຳ ຈຶ່ງເຂົ້າໃຈວ່າ ບໍ່ມີພິກຂຸຢູ່ໃນອາຣາມ ມີແຕ່ພວກອາຊີວົກກຳລັງອາບນ້ຳດ້ວຍນ້ຳຝົນ" ຈຶ່ງສັ່ງສາວໃຊ້ວ່າ "ໄປເທີ້ນແມ່ສາວໃຊ້ ເຈົ້າໄປທີ່ອາຣາມແລ້ວບອກເວລາວ່າ ເຖິງເວລາແລ້ວ ທ່ານຜູ້ຈະເລີນ ພັດຕາຫານສຳເລັດແລ້ວ"

ສະໄໝນັ້ນ ພິກຂຸເຫຼົ່ານັ້ນຊຳຮະຮ່າງກາຍຈົນໜາວແລ້ວນຸ່ງຜ້າຮຽບຮ້ອຍ ຕ່າງຖືຈີວອນເຂົ້າໄປສູ່ທີ່ຢູ່ຕາມເດີມ ນາງທາສີນັ້ນໄປສູ່ອາຣາມບໍ່ພົ້ພວກພິກຂຸເຂົ້າໃຈວ່າ "ບໍ່ມີພິກຂຸໃນອາຣາມ ອາຣາມວ່າງເປົ່າ" ຈຶ່ງກັບໄປຫານາງວິສາຂາມິຄາຣະມາຕາ ໄດ້ກ່າວດັ່ງນີ້ວ່າ "ຍາແມ່ ບໍ່ມີພິກຂຸໃນອາຣາມ ອາຣາມວ່າງເປົ່າ"

ລຳດັບນັ້ນ ນາງວິສາຂາມິຄາຣະມາຕາ ຜູ້ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ໄດ້ມີຄວາມຄິດດັ່ງນີ້ວ່າ "ພວກພຣະຜູ້ເປັນເຈົ້າຄົງຈະຊຳຮະຮ່າງກາຍຈົນໜາວແລ້ວນຸ່ງຜ້າຮຽບຮ້ອຍ ຕ່າງຖືຈີວອນເຂົ້າໄປສູ່ທີ່ຢູ່ຕາມເດີມ ນາງທາສີຄົນນີ້ເປັນຄົນຈ້ຳຈຶ່ງເຂົ້າໃຈວ່າ ບໍ່ມີພິກຂຸໃນອາຣາມ ອາຣາມວ່າງເປົ່າ" ຈຶ່ງສັ່ງສາວໃຊ້ອີກວ່າ "ໄປເທີ້ນແມ່ສາວໃຊ້ ເຈົ້າໄປທີ່ອາຣາມແລ້ວບອກພັດຕະການວ່າ ເຖິງເວລາແລ້ວ ທ່ານຜູ້ຈະເລີນ ພັດຕາຫານສຳເລັດແລ້ວ"

[໓໔໐] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຮຽກພິກຂຸທັງຫຼາຍມາຮັບສັ່ງວ່າ "ພວກທ່ານຈົ່ງກຽມບາດແລະຈີວອນ ເຖິງເວລາພັດຕາຫານແລ້ວ"

ພິກຂຸເຫຼົ່ານັ້ນທູນຮັບສະໜອງພຣະພຸດທະດຳຣັດແລ້ວ

ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນ ສະເດັດຫາຍໄປໃນພຣະເຊຕະວັນ ມາຜາກົດທີ່ຊຸ້ມປະຕູເຮືອນນາງວິສາຂາມິຄາຣະມາຕາ ປຽບຄື ຄົນມີກຳລັງຢຽດແຂນທີ່ຄູ້ ຫຼືຄູ້ແຂນທີ່ຢຽດ ປະທັບນັ່ງເທິງພຣະພຸດທະອາດທີ່ເຂົາປູໄວ້ພ້ອມດ້ວຍ ພິກຂຸສົງ

ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາຣື່ນເຣີງບັນເທີງໃຈວ່າ ໜ້າອັດສະຈັນຈິງ ຜູ້ຈະເລີນ ທັງຫຼາຍ ບໍ່ເຄີຍຜາກົດ ຜູ້ຈະເລີນທັງຫຼາຍ ພຣະຕະຖາຄົດເຈົ້າຊົງມີລິດຫຼາຍ ຊົງມີອານຸພາບຫຼາຍ ເມື່ອແມ່ນໍ້າໄຫຼນອງໄປພຽງເຂົ່າແດ່ ເມື່ອແມ່ນໍ້າໄຫຼນອງໄປພຽງແອວແດ່ ຕີນຫຼືຈີວອນຂອງພິກຂຸ ຈັກອົງດຽວກໍບໍ່ປຽກນໍ້າເລີຍ" ຈຶ່ງໄດ້ປະເຄນພິກຂຸສົງມີພຣະພຸດທະເຈົ້າເປັນປະທານ ດ້ວຍຂອງ ຫຍໍ້າຂອງສັນອັນປະນິດດ້ວຍມືຕົນເອງ ກະທັ່ງພຣະຜູ້ມີພຣະພາກເຈົ້າສະເຫວີຍສຳເລັດແລ້ວ ຊົງ ລະພຣະຫັດຈາກບາດ ນັ່ງເຝົ້າຢູ່ທີ່ສົມຄວນ ຂາບທູນວ່າ "ຂ້າພຣະອົງຂາບທູນຂໍພອນ ໗ ປະ ການ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຕະຖາຄົດທັງຫຼາຍເຊົາໃຫ້ພອນສາແລ້ວ ວິສາຂາ"
ນາງວິສາຂາຂາບທູນວ່າ "ຂ້າພຣະອົງທູນຂໍພອນທີ່ເໝາະສົມແລະບໍ່ມີໂທດ ຂ້ານ້ອຍ"
ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຈົ່ງເວົ້າມາເທີ້ນ ວິສາຂາ"

## ເລື້ອງນາງວິສາຂາຂໍພອນເພື່ອຖວາຍຜ້າອາບນໍ້າຝົນເປັນຕົ້ນ

ນາງວິສາຂາມິຄາຣະມາຕາຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ຂ້າພຣະອົງປະສົງ ຈະຖວາຍຜ້າວັດສິກະສາດົກ ຖວາຍອາຄັນຕຸກະພັດ ຖວາຍຄະມິກະພັດ ຖວາຍຄິລານະພັດ ຖວາຍຄິລານຸປັດຖາກະພັດ ຖວາຍຄິລານະເພສັດ ຖວາຍທຸວະຍາຄູ°ແກ່ພຣະສົງ ແລະຖວາຍຜ້າ ອາບນໍ້າແກ່ພິກຂຸນີສົງຈົນຕະຫຼອດຊີວິດ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ນາງເຫັນອຳນາດປະໂຫຍດອັນໃດຈຶ່ງຂໍພອນ ໗ ປະ ການກັບຕະຖາຄົດ"

ນາງວິສາຂາມິຄາຣະມາຕາຂາບທູນວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ມື້ນີ້ຂ້າພຣະອົງສັ່ງ ສາວໃຊ້ໄປວ່າ ໄປເທີ້ນແມ່ສາວໃຊ້ ເຈົ້າໄປສູ່ອາຣາມແລ້ວບອກເວລາວ່າ ໄດ້ເວລາແລ້ວ ທ່ານຜູ້ ຈະເລີນ ພັດຕາຫານສຳເລັດແລ້ວ ເມື່ອນາງໄປສູ່ອາຣາມໄດ້ເຫັນພິກຂຸເອົາຈີວອນວາງໄວ້ ສົງນໍ້າ ດ້ວຍນໍ້າຝົນຢູ່ຈຶ່ງເຂົ້າໃຈວ່າ ບໍ່ມີພິກຂຸຢູ່ໃນອາຣາມ ມີແຕ່ພວກອາຊີວົກກຳລັງອາບນໍ້າດ້ວຍນໍ້າຝົນ

ຈຶ່ງກັບເຂົ້າມາຫາຂ້າພຣະອົງບອກດັ່ງນີ້ວ່າ ຍາແມ່ ບໍ່ມີພິກຂຸຢູ່ໃນອາຮາມ ມີແຕ່ພວກອາຊີວົກກຳລັງອາບນ້ຳດ້ວຍນ້ຳຝົນ”

໑. ການເປືອຍກາຍບໍ່ງາມ ໜ້າລັງກຽດ ໜ້າຊັງ ຂ້າພຣະອົງເຫັນອຳນາດປະໂຫຍດນີ້ ຈຶ່ງປາຖະໜາຖວາຍຜ້າວັດສິກະສາດົກແກ່ພຣະສົງຈົນຕະຫຼອດຊີວິດ

໒. ອີກແນວໜຶ່ງ ພິກຂຸອາຄັນຕຸກະບໍ່ຊ່ຽວຊານຫົນທາງ ບໍ່ຮູ້ຈັກທີ່ໂຄຈອນ ບິນທະບາດລຳບາກ ພິກຂຸອາຄັນຕຸກະນັ້ນສັນອາຄັນຕຸກະພັດຂອງຂ້າພຣະອົງແລ້ວ ພໍຊ່ຽວຊານທາງ ຮູ້ຈັກທີ່ໂຄຈອນ ຈະທ່ຽວບິນທະບາດໄດ້ບໍ່ລຳບາກ ຂ້າພຣະອົງເຫັນອຳນາດປະໂຫຍດນີ້ ຈຶ່ງປາຖະໜາຖວາຍອາຄັນຕຸກະພັດແກ່ພຣະສົງຈົນຕະຫຼອດຊີວິດ

໓. ອີກແນວໜຶ່ງ ພິກຂຸຜູ້ກຽມຈະເດີນທາງ ມົວສະແຫວງຫາພັດຕາຫານເພື່ອຕົນຢູ່ຈະພາດຈາກໝູ່ກວຽນ ຫຼືເຖິງທີ່ທີ່ຕົນຈະໄປຢູ່ເມື່ອມືດຄ່ຳ ຈະເດີນທາງລຳບາກ ພິກຂຸຜູ້ກຽມຈະເດີນທາງນັ້ນສັນຄະມິກະພັດຂອງຂ້າພຣະອົງແລ້ວຈະບໍ່ພາດຈາກໝູ່ກວຽນເຖິງທີ່ທີ່ຕົນຈະໄປທັນເວລາຈະໄດ້ເດີນທາງບໍ່ລຳບາກ ຂ້າພຣະອົງເຫັນອຳນາດປະໂຫຍດນີ້ ຈຶ່ງປາຖະໜາຖວາຍຄະມິກະພັດແກ່ພຣະສົງຈົນຕະຫຼອດຊີວິດ

໔. ອີກແນວໜຶ່ງ ເມື່ອພິກຂຸໄຂ້ບໍ່ໄດ້ໂພຊະນາຫານທີ່ເປັນສັບປາຍະ ອາພາດຈະກຳເຣີບຫຼືຈະເຖິງມໍຣະນະພາບໄດ້ ພິກຂຸໄຂ້ນັ້ນສັນຄິລານະພັດຂອງຂ້າພຣະອົງແລ້ວອາພາດຈະທຸເລົາບໍ່ເຖິງມໍຣະນະພາບ ຂ້າພຣະອົງເຫັນອຳນາດປະໂຫຍດນີ້ ຈຶ່ງປາຖະໜາຖວາຍຄິລານະພັດແກ່ພຣະສົງຈົນຕະຫຼອດຊີວິດ

໕. ອີກແນວໜຶ່ງ ພິກຂຸຜູ້ປິ່ນປົວພິກຂຸໄຂ້ມົວສະແຫວງຫາພັດຕາຫານເພື່ອຕົນເອງຈະນຳພັດຕາຫານໄປຖວາຍພິກຂຸໄຂ້ໃນເມື່ອເວລາສາຍ ຕົນເອງຈະອົດອາຫານ ພິກຂຸຜູ້ປິ່ນປົວພິກຂຸໄຂ້ນັ້ນໄດ້ສັນຄິລານຸປັດຖາກະພັດຂອງຂ້າພຣະອົງແລ້ວ ຈະນຳພັດຕາຫານໄປຖວາຍພິກຂຸໄຂ້ໄດ້ທັນເວລາ ຕົນເອງກໍບໍ່ອົດອາຫານ ຂ້າພຣະອົງເຫັນອຳນາດປະໂຫຍດນີ້ ຈຶ່ງປາຖະໜາຖວາຍຄິລານຸປັດຖາກະພັດແກ່ພຣະສົງຈົນຕະຫຼອດຊີວິດ

໖. ອີກແນວໜຶ່ງ ເມື່ອພິກຂຸໄຂ້ບໍ່ໄດ້ເພສັດທີ່ເປັນສັບປາຍະ ອາພາດຈະກຳເຣີບ ຫຼືເຖິງມໍຣະນະພາບໄດ້ ພິກຂຸໄຂ້ນັ້ນສັນຄິລານະເພສັດຂອງຂ້າພຣະອົງແລ້ວອາພາດຈະທຸເລົາບໍ່ເຖິງມໍຣະນະພາບ ຂ້າພຣະອົງເຫັນອຳນາດປະໂຫຍດນີ້ ຈຶ່ງປາຖະໜາຖວາຍຄິລານະເພສັດແກ່ພຣະສົງຈົນຕະຫຼອດຊີວິດ

ໆ. ອີກແນວໜຶ່ງ ພຣະຜູ້ມີພຣະພາກເຈົ້າຊົງເຫັນອານິສົງ ໑໐ ປະການ ຈຶ່ງໄດ້ຊົງອະນຸຍາດເຂົ້າຕົ້ມໄວ້ທີ່ເມືອງອັນທະກະວິນທະ ຂ້າພຣະອົງເຫັນອຳນາດອານິສົງເຫຼົ່ານັ້ນ ຈຶ່ງປາຖະໜາຖວາຍເຂົ້າຕົ້ມເປັນປະຈຳແກ່ພຣະສົງຈົນຕະຫຼອດຊີວິດ

໘. ຂ້າແຕ່ ພຣະອົງຜູ້ຈະເລີນ ພິກຂຸນີທັງຫຼາຍໃນທຳວິໄນນີ້ ເປືອຍກາຍອາບນ້ຳໃນແມ່ນ້ຳອະຈິຣະວະດີທ່າດຽວກັບຍິງແພດສະຫຍາ ພວກຍິງແພດສະຫຍາທັງຫຼາຍເຍີ້ຍຫຍັນພິກຂຸນີເຫຼົ່ານັ້ນວ່າ ແມ່ເຈົ້າທັງຫຼາຍ ພວກທ່ານຍັງເປັນສາວ ຈະປະພຶດພົມມະຈັນໄປເຮັດຫຍັງກັນ ທຳມະດາມະນຸດຄວນບໍຣິໂພກກາມບໍ່ແມ່ນບໍ ຕໍ່ເມື່ອຊະຣາ ພວກທ່ານຈຶ່ງຄ່ອຍປະພຶດພົມມະຈັນ ເມື່ອເປັນແນວນີ້ ຊື່ວ່າໄດ້ຈັບສອຍເອົາປະໂຫຍດທັງ ໒ ແລ້ວ" ພິກຂຸນີເຫຼົ່ານັ້ນຖືກພວກຍິງແພດສະຫຍາເຍາະເຍີ້ຍຕ່າງເກີ້ເຂີນ ຂ້ານ້ອຍ ມາຕຸຄາມ°ເປືອຍກາຍຍ່ອມບໍ່ງົດງາມ ໜ້າລັງກຽດໜ້າຊັງ

ຂ້າພຣະອົງເຫັນອຳນາດປະໂຫຍດນີ້ ຈຶ່ງປາຖະໜາຖວາຍຜ້າອາບນ້ຳແກ່ພິກຂຸນີສົງຈົນຕະຫຼອດຊີວິດ

[໓໕໑] ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ວິສາຂາ ທ່ານເຫັນອານິສົງອັນໃດຈຶ່ງຂໍພອນ ໘ ປະການກັບຕະຖາຄົດ"

ນາງວິສາຂາມິຄາຣະມາຕາຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພິກຂຸທັງຫຼາຍໃນພຣະທຳວິໄນນີ້ຈຳພັນສາໃນທິດຕ່າງ ໆ ແລ້ວຈະເດີນທາງມາເມືອງສາວັດຖີເພື່ອເຝົ້າພຣະຜູ້ມີພຣະພາກເຈົ້າ ພິກຂຸເຫຼົ່ານັ້ນຈະເຂົ້າເຝົ້າພຣະຜູ້ມີພຣະພາກເຈົ້າທູນຖາມວ່າ ຂ້າແຕ່ ພຣະອົງຜູ້ຈະລີນ ພິກຂຸຊື່ນີ້ມໍຣະນະພາບແລ້ວ ທ່ານມີຄະຕິແນວໃດ ມີພົບໜ້າແນວໃດ ພຣະຜູ້ມີພຣະພາກເຈົ້າຈະຊົງພະຍາກອນພິກຂຸນັ້ນໃນໂສດາປັດຕິຜົນ ສະກະທາຄາມີຜົນ ອະນາຄາມີຜົນ ຫຼືອະຣະຫັດຕະຜົນ ຂ້າພຣະອົງຈະເຂົ້າໄປຫາພິກຂຸເຫຼົ່ານັ້ນແລ້ວຖາມວ່າ ພຣະຜູ້ເປັນເຈົ້າອົງນັ້ນເຄີຍມາເມືອງສາວັດຖີບໍຂ້ານ້ອຍ ຖ້າພິກຂຸເຫຼົ່ານັ້ນຕອບຂ້າພຣະອົງວ່າ ພິກຂຸນັ້ນເຄີຍມາເມືອງສາວັດຖີໃນເລື້ອງນີ້ຂ້າພຣະອົງຈະສັນນິດຖານໄດ້ວ່າ ພຣະຜູ້ເປັນເຈົ້ານັ້ນຄົງໃຊ້ຜ້າວັດສິກະສາດົກ ຄົງສັນອາຄັນຕຸກະພັດ ຄະມິກະພັດ ຄິລານະພັດ ຄິລານຸປັດຖາກະພັດ ຄິລານະເພສັດ ຫຼືທຸວະຍາຄູຂອງຂ້າພຣະອົງເປັນແນ່ ເມື່ອຂ້າພຣະອົງຣະນຶກເຖິງບຸນກຸສົນນັ້ນກໍຈະເກີດຄວາມດີໃຈ ເມື່ອຂ້າພຣະອົງພໍໃຈກໍຈະເກີດອິ່ມໃຈ ເມື່ອອິ່ມໃຈ ກາຍຈະສະງົບ ຂ້າພຣະອົງມີກາຍສະງົບຈະມີຄວາມສຸກ ຈິດຂອງຜູ້ມີຄວາມສຸກຈະຕັ້ງໝັ້ນ ຂ້າພຣະອົງຈະໄດ້ອົບຮົມອິນຊີ ພະລະ ແລະໂພດຊົງ ຂ້າພຣະອົງເຫັນອານິສົງນີ້ຈຶ່ງຂາບທູນຂໍພອນ ໘ ປະການກັບພຣະຕະຖາຄົດເຈົ້າ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ດີແລ້ວ ດີແລ້ວ ວິສາຂາ ເປັນການດີແລ້ວທີ່ທ່ານເຫັນອານິສົງນີ້ຈຶ່ງຂໍພອນ ໘ ປະການກັບຕະຖາຄົດ ວິສາຂາ ເຮົາອະນຸຍາດພອນ ໘ ປະການແກ່ທ່ານ"

## ຄາຖາອະນຸໂມທະນາ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນານາງວິສາຂາມິຄາຣະມາຕາດ້ວຍພຣະຄາຖາເຫຼົ່ານີ້ວ່າ

ສະຕີໃດເມື່ອໃຫ້ເຂົ້າແລະນ້ຳກໍເບີກບານໃຈ
ມີສີນ ເປັນສາວິກາຂອງພຣະສຸຄົດເຈົ້າ
ຄອບງຳຄວາມຂີ້ຖີ່ ໃຫ້ທານເຊິ່ງເປັນທົນທາງສະຫວັນ
ເປັນເຄື່ອງບັນເທົາຄວາມໂສກ ນຳສຸກມາໃຫ້
ສະຕີນັ້ນອາໄສທົນທາງທີ່ບໍ່ມີທຸລີ ບໍ່ມີກິເລດຍວນໃຈ
ຍ່ອມໄດ້ກຳລັງແລະອາຍຸທິບ ທ່ານຜູ້ປະສົງບຸນ ມີຄວາມສຸກ
ມີພະລານາໄມ ຍ່ອມພໍໃຈໃນຊາວສະຫວັນຕະຫຼອດການລະນານ

[໓໕໔] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງອະນຸໂມທະນາຕໍ່ນາງວິສາຂາມິຄາຣະມາຕາດ້ວຍພຣະຄາຖາເຫຼົ່ານີ້ແລ້ວ ສະເດັດລຸກຈາກອາສະນະແລ້ວສະເດັດກັບ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບ ພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າວັດສິກະສາດົກ ອາຄັນຕຸກະພັດຄະມິກະພັດ ຄິລານະພັດ ຄິລານຸປັດຖາກະພັດ ຄິລານະເພສັດ ທຸວະຍາຄູ ແລະຜ້າອາບນ້ຳສຳລັບພິກຂຸນີສົງ"

**ວິສາຂາພານະວານ ຈົບ**

## ໔໔໐. ນິສີທະນາທິອະນຸຊານະນາ

## ວ່າດ້ວຍຊົງອະນຸຍາດຜ້າຮອງນັ່ງເປັນຕົ້ນ

## ເລື້ອງພິກຂຸນອນຫຼັບຂາດສະຕິສຳປະຊັນຍະ

[໓໕໓] ສະໄໝນັ້ນ ພິກຂຸທັງຫຼາຍສັນອາຫານອັນປະນີດ ນອນຫຼັບຂາດສະຕິ ສຳປະຊັນຍະ ເມື່ອພວກທ່ານນອນຫຼັບຂາດສະຕິສຳປະຊັນຍະ ນ້ຳອະສຸຈິອອກມາຍ້ອນຄວາມຝັນ ເສນາສະນະ ເປິະເປື້ອນນ້ຳອະສຸຈິ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງມີທ່ານພຣະອານົນຕາມສະເດັດ ສະເດັດຈາຣິກໄປຕາມເສນາສະນະໄດ້ທອດພຣະເນດເຫັນເສນາສະນະເປິະເປື້ອນນ້ຳອະສຸຈິ ຈຶ່ງຕັດຖາມທ່ານພຣະອານົນວ່າ "ອານົນ ເສນາສະນະນັ້ນເປິະເປື້ອນອັນໃດ"

ທ່ານພຣະອານົນຂາບທູນວ່າ "ເວລານີ້ ພິກຂຸສັນອາຫານຢ່າງດີ ນອນຫຼັບຂາດສະຕິສຳປະຊັນຍະ ເມື່ອພວກພິກຂຸເຫຼົ່ານັ້ນນອນຫຼັບຂາດສະຕິສຳປະຊັນຍະ ນ້ຳອະສຸຈິອອກມາຍ້ອນຄວາມຝັນ ເສນາສະນະນີ້ຈຶ່ງເປິະເປື້ອນນ້ຳອະສຸຈິ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ແນວນັ້ນແລ ອານົນ ແນວນັ້ນແລ ອານົນ ຍ້ອນເມື່ອພິກຂຸເຫຼົ່ານັ້ນນອນຫຼັບຂາດສະຕິສຳປະຊັນຍະ ນ້ຳອະສຸຈິຍ່ອມອອກມາຍ້ອນຄວາມຝັນ ອານົນ ນ້ຳອະສຸຈິຂອງພິກຂຸຜູ້ນອນຫຼັບມີສະຕິຕັ້ງໝັ້ນ ມີສຳປະຊັນຍະ ຍ່ອມບໍ່ອອກມາ ອານົນ ນ້ຳອະສຸຈິແມ່ນຂອງປຸຖຸຊົນຜູ້ປາສະຈາກຄວາມກຳໜັດໃນກາມ[១] ຍ່ອມບໍ່ອອກມາ ອານົນ ຍ່ອມບໍ່ມີທາງເປັນໄປໄດ້ ບໍ່ແມ່ນໂອກາດທີ່ນ້ຳອະສຸຈິຂອງພຣະອະຣະຫັນຈະອອກມາ"

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ມື້ນີ້ ເຮົາມີອານົນຍ່າງຕາມຫຼັງ ທ່ຽວຈາຣິກໄປຕາມເສນາສະນະ ໄດ້ເຫັນເສນາສະນະເປິະເປື້ອນນ້ຳອະສຸຈິ ຈຶ່ງຖາມອານົນວ່າ ອານົນ ເສນາສະນະນັ້ນເປິະເປື້ອນອັນໃດ ອານົນຕອບວ່າ ເວລານີ້ ພິກຂຸສັນອາຫານຢ່າງດີ ນອນຫຼັບ ຂາດສະຕິສຳປະຊັນຍະ ເມື່ອພວກພິກຂຸເຫຼົ່ານັ້ນນອນຫຼັບຂາດສະຕິສຳປະຊັນຍະ ນ້ຳອະສຸຈິອອກມາຍ້ອນຄວາມຝັນ ເສນາສະນະເປິະເປື້ອນນ້ຳອະສຸຈິ ເຮົາກ່າວຮັບຮອງວ່າ ແນວນັ້ນແລ ອານົນ ແນວນັ້ນແລ ອານົນ ຍ້ອນເມື່ອພິກຂຸເຫຼົ່ານັ້ນນອນຫຼັບຂາດສະຕິສຳປະຊັນຍະ ອານົນ ນ້ຳອະສຸຈິຍ່ອມອອກມາຍ້ອນຄວາມຝັນ ນ້ຳອະສຸຈິຂອງພິກຂຸຜູ້ນອນຫຼັບມີສະຕິຕັ້ງໝັ້ນ ມີສຳປະຊັນຍະ ຍ່ອມບໍ່ອອກມາ ອານົນ ນ້ຳອະສຸຈິແມ່ນຂອງປຸຖຸຊົນຜູ້ປາສະຈາກຄວາມກຳໜັດໃນກາມຍ່ອມບໍ່ອອກມາ ອານົນ ຍ່ອມບໍ່ມີທາງເປັນໄປໄດ້ ບໍ່ແມ່ນໂອກາດທີ່ນ້ຳອະສຸຈິຂອງພຣະອະຣະຫັນຈະອອກມາ"

## ນອນຫຼັບຂາດສະຕິສຳປະຊັນຍະມີໂທດ ໕ ຢ່າງ

ພິກຂຸທັງຫຼາຍ ພິກຂຸທີ່ນອນຫຼັບຂາດສະຕິສຳປະຊັນຍະ ມີໂທດ ໕ ຢ່າງ ຄື

໑. ຫຼັບເປັນທຸກ
໒. ຕື່ນເປັນທຸກ
໓. ເຫັນຄວາມຝັນຊົ່ວຊາມ
໔. ເທວະດາບໍ່ຮັກສາ
໕. ນ້ຳອະສຸຈິເຄື່ອນ

ພິກຂຸທັງຫຼາຍ ພິກຂຸທີ່ນອນຫຼັບຂາດສະຕິສຳປະຊັນຍະ ມີໂທດ ໕ ຢ່າງນີ້ແລ

## ນອນຫຼັບມີສະຕິສຳປະຊັນຍະ ມີອານິສົງ ໕ ຢ່າງ

ພິກຂຸທັງຫຼາຍ ພິກຂຸທີ່ນອນຫຼັບມີສະຕິຕັ້ງໝັ້ນ ມີສຳປະຊັນຍະ ມີອານິສົງ ໕ ຢ່າງ ຄື

໑. ຫຼັບເປັນສຸກ
໒. ບໍ່ເຫັນຄວາມຝັນຊົ່ວຊາມ
໕. ນ້ຳອະສຸຈິບໍ່ເຄື່ອນ
໓. ຕື່ນເປັນສຸກ
໔. ເທວະດາຮັກສາ

ພິກຂຸທັງຫຼາຍ ພິກຂຸທີ່ນອນຫຼັບມີສະຕິຕັ້ງໝັ້ນ ມີສຳປະຊັນຍະ ມີອານິສົງ ໕ ຢ່າງນີ້ແລ

ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າຮອງນັ່ງ ເພື່ອຮັກສາກາຍ ຮັກສາຈີວອນ ຮັກສາເສນາສະນະ

## ເລື້ອງຜ້າປູນັ່ງຜືນນ້ອຍເກີນໄປ

ສະໄໝນັ້ນ ຜ້າຮອງນັ່ງມີຂະໜາດນ້ອຍເກີນໄປ ປ້ອງກັນເສນາສະນະໄດ້ບໍ່ໝົດ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ເຮັດຜ້າປູນັ່ງໃຫຍ່ໄດ້ຕາມທີ່ພິກຂຸຕ້ອງການ"

## ເລື້ອງຝີດາດ

[໒໕໔] ສະໄໝນັ້ນ ທ່ານພຣະເພລັດຖະສີສະຜູ້ເປັນພຣະອຸປັດຊາຂອງທ່ານພຣະອານົນອາພາດເປັນພະຍາດຝີດາດ ຜ້ານຸ່ງຫົ່ມແຫ້ງຕິດໂຕຍ້ອນນ້ຳເຫຼືອງ ພວກພິກຂຸເອົານ້ຳຊຸບຜ້າເຫຼົ່ານັ້ນແລ້ວຄ່ອຍ ໆ ດຶງອອກມາ

ພຣະຜູ້ມີພຣະພາກເຈົ້າສະເດັດຈາຣິກໄປຕາມເສນາສະນະ ໄດ້ທອດພຣະເນດເຫັນພິກຂຸເຫຼົ່ານັ້ນ ກຳລັງເອົານ້ຳຊຸບຜ້າແລ້ວຄ່ອຍ ໆ ດຶງອອກ ຈຶ່ງສະເດັດເຂົ້າໄປຫາພິກຂຸເຫຼົ່ານັ້ນຕັດຖາມດັ່ງນີ້ວ່າ "ພິກຂຸທັງຫຼາຍ ພິກຂຸອົງນີ້ອາພາດເປັນພະຍາດອັນໃດ"

ພວກພິກຂຸຂາບທູນວ່າ "ອາພາດເປັນພະຍາດຝີດາດ ຜ້ານຸ່ງຫົ່ມແຫ້ງຕິດໂຕຍ້ອນນ້ຳເຫຼືອງ ພວກຂ້າພຣະອົງເອົານ້ຳຊຸບຜ້າເຫຼົ່ານັ້ນແລ້ວຄ່ອຍ ໆ ດຶງອອກ ຂ້ານ້ອຍ"

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງ ກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າອັດຝີແກ່ພິກຂຸອາພາດທີ່ເປັນຫິດຕຸ່ມພຸພອງ ຫຼື ຝີດາດ"

## ເລື້ອງຊົງອະນຸຍາດຜ້າເຊັດປາກ

[໒໕໕] ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາຖືຜ້າເຊັດປາກ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ "ຂໍພຣະຜູ້ມີພຣະພາກເຈົ້າໂຜດຮັບຜ້າເຊັດປາກຂອງຂ້າພຣະອົງ ເພື່ອເກື້ອກູນ ເພື່ອຄວາມສຸກຕະຫຼອດການລະນານເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຊົງຮັບຜ້າເຊັດປາກແລ້ວຊົງຊີ້ແຈ່ງໃຫ້ນາງວິສາຂາມິຄາຣະມາຕາ ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນ ແຈ່ມໃສດ້ວຍທຳມີກະຖາ

ຄັ້ງນັ້ນ ນາງວິສາຂາມິຄາຣະມາຕາຜູ້ເຊິ່ງພຣະຜູ້ມີພຣະພາກເຈົ້າໄດ້ຊີ້ແຈ່ງໃຫ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສ ດ້ວຍທຳມີກະຖາ ຈຶ່ງໄດ້ລຸກຈາກອາສະນະ ກະທຳປະທັກຂິນແລ້ວຈາກໄປ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າເຊັດປາກ"

## ເລື້ອງຊົງອະນຸຍາດໃຫ້ຖືວິສາສະຜ້າເປືອກໄມ້

[໓໕໖] ສະໄໝນັ້ນ ມັນລະກະສັດຊື່ໂຣຊະ ເປັນສະຫາຍຂອງທ່ານພຣະອານົນ

ມັນລະກະສັດໂຣຊະນັ້ນຝາກຜ້າເປືອກໄມ້ເກົ່າໄວ້ກັບທ່ານພຣະອານົນ ທ່ານພຣະອານົນເອງກໍມີຄວາມຕ້ອງການຜ້າເປືອກໄມ້ເກົ່າ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຜູ້ປະກອບດ້ວຍຄຸນສົມບັດ ໕ ຢ່າງຖືວິສາສະໄດ້ ຄື

໑. ເຄີຍເຫັນກັນມາ
໒. ເຄີຍບອກອະນຸຍາດໄວ້
໓. ເຄີຍຄົບກັນມາ
໔. ເຂົາຍັງມີຊີວິດຢູ່
໕. ຮູ້ວ່າ "ເມື່ອເຮົາຖືເອົາແລ້ວ ເຂົາ (ຜູ້ເປັນເຈົ້າຂອງ) ຈະພໍໃຈ"

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຜູ້ປະກອບດ້ວຍຄຸນສົມບັດ ໕ ຢ່າງນີ້ຖືວິສາສະກັນໄດ້"

## ເລື້ອງໄຕຣຈີວອນບໍລິບູນ

[໓໕໗] ສະໄໝນັ້ນ ພິກຂຸທັງຫຼາຍມີໄຕຣຈີວອນບໍລິບູນ ແຕ່ຍັງຕ້ອງການຜ້າກອງນ້ຳແດ່ ຖົງແດ່

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າບໍຣິຂານ"

# ໔໔໑. ປັດສິມະວິກັບປະນຸປະຄະຈີວະຣາທິກະຖາ

## ວ່າດ້ວຍຜ້າທີ່ຕ້ອງວິກັບເປັນຢ່າງຕ່ຳເປັນຕົ້ນ

### ເລື້ອງອະທິຖານ

[໓໕໗] ຄັ້ງນັ້ນ ພິກຂຸທັງຫຼາຍໄດ້ເປີກສາກັນດັ່ງນີ້ວ່າ "ຜ້າທີ່ພຣະຜູ້ມີພຣະພາກເຈົ້າຊົງອະນຸຍາດ ຄືໄຕຣຈີວອນ ຜ້າອາບນ້ຳຝົນ ຜ້າປູນັ່ງ ຜ້າປູນອນ ຜ້າອັດຝີ ຜ້າເຊັດປາກ ຫຼືຜ້າບໍຣິຂານ ຕ້ອງອະທິຖານທັງໝົດບໍ ຫຼືວ່າຕ້ອງວິກັບ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ອະທິຖານຜ້າໄຕຣຈີວອນບໍ່ແມ່ນໃຫ້ວິກັບ ໃຫ້ອະທິຖານ ຜ້າອາບນ້ຳຝົນຕະຫຼອດ ໔ ເດືອນໃນລະດູຝົນ ພົ້ນເຂດນັ້ນໃຫ້ວິກັບໄວ້ ໃຫ້ອະທິຖານຜ້າປູນັ່ງ ບໍ່ແມ່ນໃຫ້ວິກັບ ໃຫ້ອະທິຖານຜ້າປູນອນ ບໍ່ແມ່ນໃຫ້ວິກັບ ໃຫ້ອະທິຖານຜ້າອັດຝີຕະຫຼອດເວລາທີ່ອາພາດ ພົ້ນຈາກນັ້ນໃຫ້ວິກັບໄວ້ ໃຫ້ອະທິຖານຜ້າເຊັດປາກ ບໍ່ແມ່ນໃຫ້ວິກັບ ໃຫ້ອະທິຖານຜ້າບໍຣິຂານ ບໍ່ແມ່ນໃຫ້ວິກັບ"

### ເລື້ອງຈີວອນມີຂະໜາດພຽງໃດຈຶ່ງຕ້ອງວິກັບ

ສະໄໝນັ້ນ ພິກຂຸທັງຫຼາຍໄດ້ມີຄວາມຄິດດັ່ງນີ້ວ່າ "ຈີວອນມີຂະໜາດພຽງໃດເປັນຢ່າງຕ່ຳເພື່ອວິກັບ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ວິກັບຈີວອນມີຂະໜາດຍາວ ໘ ນິ້ວ ກວ້າງ ໔ ນິ້ວ ໂດຍນິ້ວສຸຄົດເປັນຢ່າງຕ່ຳ"

### ເລື້ອງອຸດຕະຣາສົງທີ່ເຮັດຈາກຜ້າບັງສຸກຸນໜັກ

[໓໕໙] ສະໄໝນັ້ນ ອຸດຕະຣາສົງທີ່ເຮັດຈາກຜ້າບັງສຸກຸນຂອງທ່ານພຣະມະຫາກັດສະປະໜັກ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຫຍິບຕາບດ້ວຍດ້າຍ"

## ເລື້ອງຊາຍສັງຄາຕິບໍ່ສະເໝີກັນ

ສັງຄາຕິມີຊາຍບໍ່ສະເໝີກັນ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຮື້ຊາຍທີ່ບໍ່ທ່ກັນອອກ"

## ເລື້ອງດ້າຍຂາດອອກ

ດ້າຍຂາດອອກ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຕິດຜ້າອະນຸວາດຫຸ້ມຂອບ"

## ເລື້ອງແຜ່ນສັງຄາຕິລຸ່ຍອອກ

ສະໄໝນັ້ນ ແຜ່ນສັງຄາຕິລຸ່ຍອອກ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຫຍິບຕະເຂັບດັ່ງຕາໝາກຣຸກ"

## ເລື້ອງຜ້າບໍ່ພໍ

[໓໖໐] ສະໄໝນັ້ນ ເມື່ອສົງກຳລັງເຮັດໄຕຣຈີວອນໃຫ້ພິກຂຸອົງໜຶ່ງ ຜ້າຕັດທັງໝົດບໍ່ພໍ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າທີ່ຕ້ອງຕັດ ໔ ຜືນ ບໍ່ຕັດ ໑ ຜືນ"

ຜ້າທີ່ຕັດ ໔ ຜືນ ທີ່ບໍ່ຕັດ ໑ ຜືນ ຜ້າກໍຍັງບໍ່ພໍ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດຜ້າທີ່ບໍ່ຕັດ ໔ ຜືນ ຕັດ ໑ ຜືນ"

## ເລື້ອງຜ້າຕໍ່ຂ້າງ

ຜ້າທີ່ບໍ່ຕັດ ໔ ຜືນ ທີ່ຕັດ ໑ ຜືນ ຜ້າກໍຍັງບໍ່ພໍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ຕິດຜ້າຕໍ່ຂ້າງ ພິກຂຸທັງຫຼາຍ ອັນໜຶ່ງ ພິກຂຸບໍ່ເພິ່ງໃຊ້ຜ້າທີ່ບໍ່ໄດ້ຕັດທັງໝົດ ອົງໃດໃຊ້ ຕ້ອງອາບັດທຸກກົດ"

ຊົງອະນຸຍາດໃຫ້ໃຫ້ຜ້າແກ່ມານດາບິດາໄດ້

## ເລື້ອງຈີວອນເກີດຂຶ້ນຫຼາຍ

[໓໗໑] ສະໄໝນັ້ນ ຈີວອນເກີດຂຶ້ນແກ່ພິກຂຸອົງໜຶ່ງຫຼາຍຜືນ ແລະພິກຂຸນັ້ນປະສົງຈະໃຫ້ຜ້ານັ້ນແກ່ມານດາບິດາ ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເມື່ອພິກຂຸໃຫ້ດ້ວຍກ່າວວ່າ ເປັນມານດາບິດາ ເຮົາຈະວ່າອັນໃດ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ໃຫ້ແກ່ມານດາບິດາ ແຕ່ພິກຂຸ ບໍ່ເພິ່ງເຮັດສັດທາຜູ້ຖວາຍ (ຂອງທີ່ໃຫ້ດ້ວຍສັດທາ )ໃຫ້ຕົກໄປ ອົງໃດເຮັດໃຫ້ຕົກໄປ ຕ້ອງອາບັດທຸກກົດ"

## ເລື້ອງມ້ຽນຈີວອນໄວ້ໃນວິຫານອັນທະວັນ

[໓໗໘] ສະໄໝນັ້ນ ພິກຂຸອົງໜຶ່ງມ້ຽນຈີວອນ (ສັງຄາຕິ) ໄວ້ໃນປ່າອັນທະວັນ ຄອງອຸດຕະຣາສົງກັບອັນຕະຣະວາສົກ ເຂົ້າໄປບິນທະບາດໃນໝູ່ບ້ານ ພວກໂຈນລັກຈີວອນ (ສັງຄາຕິ) ນັ້ນໄປ ພິກຂຸນັ້ນຈຶ່ງໃຊ້ຜ້າເກົ່າ ຄອງຈີວອນເສົ້າໝອງ ພວກພິກຂຸກ່າວແນວນີ້ວ່າ "ທ່ານ ເປັນຫຍັງທ່ານຈຶ່ງໃຊ້ຜ້າເກົ່າຄອງຈີວອນເສົ້າໝອງນໍ"

ພິກຂຸອົງນັ້ນຕອບວ່າ "ທ່ານທັງຫຼາຍ ຂ້ານ້ອຍມ້ຽນຈີວອນ (ສັງຄາຕິ) ໄວ້ໃນປ່າອັນທະວັນແຫ່ງນີ້ ແລ້ວຄອງອຸດຕະຣາສົງກັບອັນຕະຣະວາສົກເຂົ້າໄປບິນທະບາດໃນໝູ່ບ້ານ ພວກໂຈນລັກຈີວອນ (ສັງຄາຕິ) ນັ້ນໄປ ຍ້ອນເຫດນັ້ນ ຂ້ານ້ອຍຈຶ່ງໃຊ້ຜ້າເກົ່າ ຄອງຈີວອນເສົ້າໝອງ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພິກຂຸມີແຕ່ອຸດຕະຣາສົງກັບອັນຕະຣະວາສົກ ບໍ່ເພິ່ງເຂົ້າໝູ່ບ້ານ ອົງໃດເຂົ້າໄປ ຕ້ອງອາບັດທຸກກົດ"

## ເລື້ອງທ່ານພຣະອານົນເຜີສະຕິ

ສະໄໝນັ້ນ ທ່ານພຣະອານົນເຜີສະຕິ ຄອງອຸດຕະຣາສົງກັບອັນຕະຣະວາສົກເຂົ້າໄປບິນທະບາດໃນໝູ່ບ້ານ

ພວກພິກຂຸໄດ້ກ່າວກັບທ່ານພຣະອານົນດັ່ງນີ້ວ່າ "ທ່ານອານົນ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດຫ້າມໄວ້ບໍ່ແມ່ນບໍວ່າ ພິກຂຸມີແຕ່ອຸດຕະຣາສົງກັບອັນຕະຣະວາສົກບໍ່ເພິ່ງເຂົ້າໝູ່ບ້ານ ເປັນຫຍັງທ່ານຈຶ່ງມີພຽງອຸດຕະຣາສົງກັບອັນຕະຣະວາສົກເຂົ້າໝູ່ບ້ານນໍ"

ທ່ານພຣະອານົນຕອບວ່າ "ແມ່ນຂ້ານ້ອຍ ພຣະຜູ້ມີພຣະພາກເຈົ້າຊົງບັນຍັດຫ້າມໄວ້ແລ້ວ

ວ່າ ພິກຂຸມີແຕ່ອຸດຕະຣາສົງກັບອັນຕະຣະວາສົກບໍ່ເພິ່ງເຂົ້າໝູ່ບ້ານ ແຕ່ຂ້ານ້ອຍເຂົ້າໝູ່ບ້ານຍ້ອນເຜີສະຕິ"

ພິກຂຸທັງຫຼາຍ ຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງສະແດງທຳມີກະຖາຍ້ອນເລື້ອງນີ້ເປັນຕົ້ນເຫດ ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເຫດຈຳເປັນເພື່ອເກັບສັງຄາຕິ ມີ ໕ ຢ່າງ ຄື

໑. ເປັນໄຂ້
໒. ໄປສູ່ຝັ່ງແມ່ນ້ຳ
໓. ໄດ້ການກະຖິນແລ້ວ
໔. ເປັນລະດູທີ່ໝາຍຮູ້ວ່າຝົນຈະຕົກ[1]
໕. ວິຫານມີກຸນແຈໃສ່ແໜ້ນໜາ

ພິກຂຸທັງຫຼາຍ ເຫດຈຳເປັນເພື່ອເກັບສັງຄາຕິ ມີ ໕ ຢ່າງນີ້ແລ

ພິກຂຸທັງຫຼາຍ ເຫດຈຳເປັນເພື່ອເກັບອຸດຕະຣາສົງ ມີ ໕ ຢ່າງ ຄື

໑. ເປັນໄຂ້
໒. ໄປສູ່ຝັ່ງແມ່ນ້ຳ
໓. ໄດ້ການກະຖິນແລ້ວ
໔. ເປັນລະດູທີ່ໝາຍຮູ້ວ່າຝົນຈະຕົກ
໕. ວິຫານມີກຸນແຈໃສ່ແໜ້ນໜາ

ພິກຂຸທັງຫຼາຍ ເຫດຈຳເປັນເພື່ອເກັບອຸດຕະຣາສົງ ມີ ໕ ຢ່າງນີ້ແລ

ພິກຂຸທັງຫຼາຍ ເຫດຈຳເປັນເພື່ອເກັບອັນຕະຣະວາສົກ ມີ ໕ ຢ່າງ ຄື

໑. ເປັນໄຂ້
໒. ໄປສູ່ຝັ່ງແມ່ນ້ຳ
໓. ໄດ້ການກະຖິນແລ້ວ
໔. ສັງເກດເຫັນວ່າຝົນຈະຕົກ
໕. ວິຫານມີກຸນແຈໃສ່ແໜ້ນໜາ

ພິກຂຸທັງຫຼາຍ ເຫດຈຳເປັນເພື່ອເກັບອັນຕະຣະວາສົກໄວ້ ມີ ໕ ຢ່າງນີ້ແລ

ພິກຂຸທັງຫຼາຍ ເຫດຈຳເປັນເພື່ອເກັບຜ້າອາບນ້ຳຝົນໄວ້ ມີ ໕ ຢ່າງ ຄື

໑. ເປັນໄຂ້
໒. ໄປສູ່ຝັ່ງແມ່ນ້ຳ
໓. ຜ້າອາບນ້ຳຝົນຍັງບໍ່ໄດ້ເຮັດຫຼືເຮັດຄ້າງໄວ້
໔. ໄປນອກສີມາ
໕. ວິຫານມີກຸນແຈໃສ່ແໜ້ນໜາ

ພິກຂຸທັງຫຼາຍ ເຫດຈຳເປັນເພື່ອເກັບຜ້າອາບນ້ຳຝົນໄວ້ ມີ ໕ ຢ່າງນີ້ແລ

# ໔໔໔. ສັງຄິກະຈີວະຣຸບປາທະກະຖາ

## ວ່າດ້ວຍການໃຫ້ຈີວອນເກີດຂຶ້ນແກ່ສົງ

## ເລື້ອງພິກຂຸອົງດຽວຈຳພັນສາ

[໓໗໓] ສະໄໝນັ້ນ ພິກຂຸອົງໜຶ່ງຢູ່ຈຳພັນສາຜູ້ດຽວ ຄົນທັງຫຼາຍໃນຖິ່ນນັ້ນໄດ້ຖວາຍຈີວອນດ້ວຍກ່າວວ່າ "ພວກເຮົາຂໍຖວາຍແກ່ສົງ"

ຕໍ່ມາ ພິກຂຸນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸມີ ໔ ອົງເປັນຢ່າງໜ້ອຍ ຊື່ວ່າສົງ ແຕ່ເຮົາມີຜູ້ດຽວ ແລະຄົນເຫຼົ່ານີ້ໄດ້ຖວາຍຈີວອນດ້ວຍກ່າວວ່າ ພວກເຮົາຂໍຖວາຍແກ່ສົງ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງນຳຈີວອນຂອງສົງເຫຼົ່ານີ້ໄປນະຄອນສາວັດຖີ" ແລ້ວໄດ້ນຳຈີວອນເຫຼົ່ານັ້ນໄປສູ່ນະຄອນສາວັດຖີ ໄດ້ຂາບທູນເລື້ອງນີ້ໃຫ້ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ຈີວອນເຫຼົ່ານັ້ນເປັນຂອງທ່ານຜູ້ດຽວຈົນເຖິງເວລາເດາະກະຖິນ ພິກຂຸທັງຫຼາຍ ແຕ່ໃນກໍລະນີນີ້ມີພິກຂຸຈຳພັນສາອົງດຽວ ຄົນທັງຫຼາຍໃນຖິ່ນນັ້ນໄດ້ຖວາຍຈີວອນດ້ວຍກ່າວວ່າ ພວກເຮົາຂໍຖວາຍແກ່ສົງ ພິກຂຸທັງຫຼາຍ ເຮົາອະນຸຍາດ ຈີວອນເຫຼົ່ານັ້ນແກ່ທ່ານອົງດຽວຈົນເຖິງເວລາເດາະກະຖິນ"

## ເລື້ອງພິກຂຸຢູ່ອົງດຽວຕະຫຼອດລະດູ

ສະໄໝນັ້ນ ພິກຂຸອົງໜຶ່ງຢູ່ອົງດຽວຕະຫຼອດລະດູ[໑] ຄົນທັງຫຼາຍໃນຖິ່ນນັ້ນໄດ້ຖວາຍຈີວອນດ້ວຍກ່າວວ່າ "ພວກເຮົາຂໍຖວາຍແກ່ສົງ"

ລຳດັບນັ້ນ ພິກຂຸນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸມີ ໔ ອົງເປັນຢ່າງໜ້ອຍ ຊື່ວ່າສົງ ແຕ່ເຮົາມີຜູ້ດຽວ ແລະຄົນເຫຼົ່ານີ້ໄດ້ຖວາຍຈີວອນດ້ວຍກ່າວວ່າ ພວກເຮົາຂໍຖວາຍແກ່ສົງ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງນຳຈີວອນຂອງສົງເຫຼົ່ານີ້ໄປນະຄອນສາວັດຖີ" ແລ້ວໄດ້ນຳຈີວອນເຫຼົ່ານັ້ນໄປສູ່ນະຄອນສາວັດຖີ ແລ້ວບອກເລື້ອງນັ້ນແກ່ ພິກຂຸທັງຫຼາຍ

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົງພ້ອມໃຈກັນແຈກກັນ

ພິກຂຸທັງຫຼາຍ ແຕ່ໃນກໍລະນີນີ້ພິກຂຸຢູ່ອົງດຽວຕະຫຼອດລະດູ ຄົນທັງຫຼາຍໃນຖິ່ນນັ້ນໄດ້ຖວາຍຈີວອນດ້ວຍກ່າວວ່າ ພວກເຮົາຂໍຖວາຍແກ່ສົງ

ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ພິກຂຸນັ້ນອະທິຖານຈີວອນເຫຼົ່ານັ້ນວ່າ ຈີວອນເຫຼົ່ານີ້ເປັນຂອງເຮົາ

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸນັ້ນຍັງບໍ່ໄດ້ອະທິຖານຈີວອນນັ້ນ ມີພິກຂຸອົງອື່ນມາກໍເພິ່ງໃຫ້ສ່ວນແບ່ງທີ່ ໆ ກັນ

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸເຫຼົ່ານັ້ນກຳລັງແບ່ງຈີວອນນັ້ນ ແຕ່ຍັງບໍ່ໄດ້ຈັບສະຫຼາກ ມີພິກຂຸອົງອື່ນມາກໍເພິ່ງໃຫ້ສ່ວນແບ່ງທີ່ ໆ ກັນ

ພິກຂຸທັງຫຼາຍ ຖ້າເມື່ອພິກຂຸເຫຼົ່ານັ້ນກຳລັງແບ່ງຈີວອນນັ້ນ ແລະຈັບສະຫຼາກສຳເລັດແລ້ວມີພິກຂຸອົງອື່ນມາ ພິກຂຸເຫຼົ່ານັ້ນບໍ່ຕ້ອງການກໍບໍ່ຕ້ອງໃຫ້ສ່ວນແບ່ງ"

## ເລື້ອງພຣະເຖຣະສອງອ້າຍນ້ອງ

ສະໄໝນັ້ນ ມີພຣະເຖຣະສອງອ້າຍນ້ອງ ຄື ທ່ານພຣະອິສິຂ້າທາດແລະທ່ານພຣະອິສິພັດຈຳພັນສາຢູ່ໃນນະຄອນສາວັດຖີ ໄດ້ເດີນທາງໄປອາວາດໃກ້ບ້ານແຫ່ງໜຶ່ງ

ຄົນທັງຫຼາຍກ່າວວ່າ "ດົນ ໆ ພຣະເຖຣະທັງຫຼາຍຈະມາ" ຈຶ່ງໄດ້ຖວາຍພັດຕາຫານພ້ອມດ້ວຍຈີວອນ

ພິກຂຸທັງຫຼາຍຜູ້ຢູ່ປະຈຳໃນອາວາດຖາມພຣະເຖຣະທັງສອງວ່າ "ທ່ານ ຂ້ານ້ອຍ ຈີວອນຂອງສົງເຫຼົ່ານີ້ເກີດຂຶ້ນຍ້ອນອາໄສພຣະເຖຣະ ພຣະເຖຣະຈະຍິນດີສ່ວນແບ່ງບໍ່"

ພຣະເຖຣະທັງສອງກ່າວແນວນີ້ວ່າ "ທ່ານທັງຫຼາຍ ພວກເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຈີວອນເຫຼົ່ານັ້ນເປັນຂອງພວກທ່ານທີ່ນັ້ນຈົນເຖິງເວລາເດາະກະຖິນ"

## ເລື້ອງພິກຂຸ ໓ ອົງຈຳພັນສາໃນນະຄອນຣາດຊະຄື

ສະໄໝນັ້ນ ພິກຂຸ ໓ ອົງຈຳພັນສາຢູ່ໃນນະຄອນຣາດຊະຄື ຄົນທັງຫຼາຍໃນຖິ່ນນັ້ນໄດ້ຖວາຍຈີວອນໂດຍກ່າວວ່າ "ພວກເຮົາຂໍຖວາຍແກ່ສົງ"

ຕໍ່ມາ ພິກຂຸເຫຼົ່ານັ້ນໄດ້ເປີກສາກັນດັ່ງນີ້ວ່າ "ພຣະຜູ້ມີພຣະພາກເຈົ້າຊົງບັນຍັດໄວ້ວ່າ ພິກຂຸມີ ໔ ອົງເປັນຢ່າງໜ້ອຍ ຊື່ວ່າສົງ ແຕ່ພວກເຮົາມີຢູ່ ໓ ອົງ ແລະຄົນເຫຼົ່ານີ້ໄດ້ຖວາຍຈີວອນດ້ວຍກ່າວວ່າ ພວກເຮົາຂໍຖວາຍແກ່ສົງ ພວກເຮົາຈະປະຕິບັດແນວໃດນໍ່"

ສະໄໝນັ້ນ ພຣະເຖຣະຫຼາຍອົງ ຄື ທ່ານພຣະນິລະວາສີ ທ່ານພຣະສານະວາສີທ່ານພຣະໂຄປະກະ ທ່ານພຣະພະຄຸ ແລະທ່ານພຣະຜະລິກະສັນທານະຢູ່ໃນກຸກກຸຕາຣາມ ເຂດນະຄອນປາຕະລີບຸດ

ພິກຂຸ ໓ ອົງນັ້ນ ໄດ້ເດີນທາງໄປນະຄອນປາຕະລີບຸດແລ້ວສອບຖາມພຣະເຖຣະທັງຫຼາຍ

ພຣະເຖຣະທັງຫຼາຍກ່າວແນວນີ້ວ່າ "ທ່ານທັງຫຼາຍ ພວກເຮົາຮູ້ທົ່ວເຖິງທຳຕາມທີ່ພຣະຜູ້ມີພຣະພາກເຈົ້າຊົງສະແດງແລ້ວ ຈີວອນເຫຼົ່ານັ້ນເປັນຂອງພວກທ່ານທີ່ນັ້ນຈົນເຖິງເວລາເດາະກະຖິນ"

## ໔໔໓. ອຸປະນັນທະສັກກະຍະປຸດຕະວັດຖຸ

### ວ່າດ້ວຍພຣະອຸປະນັນທະສາກະຍະບຸດ

### ເລື້ອງພຣະອຸປະນັນທະຈຳພັນສາແລ້ວໄປອາວາດໃກ້ບ້ານ

[໓໗໔] ສະໄໝນັ້ນ ທ່ານພຣະອຸປະນັນທະສາກະຍະບຸດຈຳພັນສາຢູ່ໃນນະຄອນສາວັດຖີໄດ້ເດີນທາງໄປອາວາດໃກ້ບ້ານແຫ່ງໜຶ່ງ

ພິກຂຸທັງຫຼາຍໃນອາວາດນັ້ນ ປະສົງຈະແບ່ງຈີວອນ ຈຶ່ງປະຊຸມກັນກ່າວແນວນີ້ວ່າ "ທ່ານພວກພິກຂຸຈະແບ່ງຈີວອນຂອງສົງເຫຼົ່ານີ້ ທ່ານຈະຍິນດີສ່ວນແບ່ງບໍ"

ທ່ານພຣະອຸປະນັນທະຕອບວ່າ "ທ່ານທັງຫຼາຍ ຂ້ານ້ອຍຂໍຍິນດີສ່ວນແບ່ງນຳ" ໄດ້ຮັບສ່ວນຈີວອນຈາກອາວາດນັ້ນແລ້ວເດີນທາງໄປອາວາດອື່ນ ແມ່ນພວກພິກຂຸໃນອາວາດອື່ນນັ້ນກໍປະສົງຈະແບ່ງຈີວອນ ຈຶ່ງປະຊຸມກັນ ແມ່ນພວກພິກຂຸເຫຼົ່ານັ້ນກໍກ່າວແນວນີ້ວ່າ "ທ່ານ ພວກພິກຂຸຈະແບ່ງຈີວອນຂອງສົງເຫຼົ່ານີ້ ທ່ານຈະຍິນດີສ່ວນແບ່ງບໍ"

ທ່ານພຣະອຸປະນັນທະຕອບວ່າ "ທ່ານທັງຫຼາຍ ຂ້ານ້ອຍຂໍຍິນດີສ່ວນແບ່ງນຳ" ໄດ້ຮັບສ່ວນຈີວອນຈາກອາວາດນັ້ນ ຖືຈີວອນຫໍ່ໃຫຍ່ເດີນທາງກັບໄປນະຄອນສາວັດຖີຕາມເດີມ

ພິກຂຸທັງຫຼາຍກ່າວແນວນີ້ວ່າ "ທ່ານອຸປະນັນທະ ທ່ານເປັນຜູ້ມີບຸນຫຼາຍ ຈີວອນຈຶ່ງເກີດຂຶ້ນແກ່ທ່ານເປັນຈຳນວນຫຼາຍ"

ທ່ານພຣະອຸປະນັນທະກ່າວວ່າ "ທ່ານທັງຫຼາຍ ຂ້ານ້ອຍຈະມີບຸນມາຈາກໃສກັນ ຂ້ານ້ອຍຈຳພັນສາຢູ່ໃນນະຄອນສາວັດຖີນີ້ ໄດ້ເດີນທາງໄປອາວາດໃກ້ບ້ານແຫ່ງໜຶ່ງ ພວກພິກຂຸໃນອາວາດນັ້ນປະສົງຈະແບ່ງຈີວອນຈຶ່ງໄດ້ປະຊຸມກັນ ພວກພິກຂຸເຫຼົ່ານັ້ນກ່າວກັບຂ້ານ້ອຍແນວນີ້ວ່າທ່ານ ພວກພິກຂຸຈະແບ່ງຈີວອນຂອງສົງເຫຼົ່ານີ້ ທ່ານຈະຍິນດີສ່ວນແບ່ງບໍ ຂ້ານ້ອຍຕອບວ່າ

ທ່ານທັງຫຼາຍ ຂ້ານ້ອຍຂໍຍິນດີສ່ວນແບ່ງນຳ ໄດ້ຮັບສ່ວນຈີວອນຈາກອາວາດນັ້ນແລ້ວເດີນທາງໄປອາວາດອື່ນ ແມ່ນພວກພິກຂຸໃນອາວາດອື່ນນັ້ນປະສົງຈະແບ່ງຈີວອນ ຈຶ່ງປະຊຸມກັນ ແມ່ນພວກພິກຂຸເຫຼົ່ານັ້ນກໍກ່າວກັບຂ້ານ້ອຍແນວນີ້ວ່າ ທ່ານ ພວກພິກຂຸຈະແບ່ງຈີວອນຂອງສົງເຫຼົ່ານີ້ ທ່ານຈະຍິນດີສ່ວນແບ່ງບໍ ຂ້ານ້ອຍຕອບວ່າ ຂ້ານ້ອຍຂໍຍິນດີສ່ວນແບ່ງນຳ ໄດ້ຮັບສ່ວນຈີວອນຈາກອາວາດນັ້ນແລ້ວເດີນທາງໄປອາວາດອື່ນ ແມ່ນພວກພິກຂຸໃນອາວາດອື່ນນັ້ນປະສົງຈະແບ່ງຈີວອນ ຈຶ່ງປະຊຸມກັນ ແມ່ນພວກພິກຂຸເຫຼົ່ານັ້ນກໍກ່າວກັບຂ້ານ້ອຍແນວນີ້ວ່າ ທ່ານ ພວກພິກຂຸຈະແບ່ງຈີວອນຂອງສົງເຫຼົ່ານີ້ ທ່ານຈະຍິນດີສ່ວນແບ່ງບໍ ຂ້ານ້ອຍຕອບວ່າ ທ່ານທັງຫຼາຍ ຂ້ານ້ອຍຂໍຍິນດີສ່ວນແບ່ງນຳ ໄດ້ຮັບຈີວອນແມ່ນຈາກອາວາດນັ້ນ ຈີວອນເປັນຈຳນວນຫຼາຍຈຶ່ງເກີດຂຶ້ນແກ່ຂ້ານ້ອຍແນວນີ້"

ພວກພິກຂຸຖາມວ່າ "ທ່ານອຸປະນັນທະ ທ່ານຈຳພັນສາໃນວັດໜຶ່ງແລ້ວຍັງຍິນດີສ່ວນຈີວອນໃນວັດອື່ນອີກບໍ" ທ່ານພຣະອຸປະນັນທະກ່າວຍອມຮັບຕາມນັ້ນ

ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງທ່ານພຣະອຸປະນັນທະສາກະຍະບຸດຈຳພັນສາໃນວັດໜຶ່ງຈຶ່ງຍິນດີສ່ວນຈີວອນໃນວັດອື່ນອີກນໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ ຯລຯ ອຸປະນັນທະ ໄດ້ຂ່າວວ່າທ່ານຈຳພັນສາໃນວັດໜຶ່ງແລ້ວຍັງຍິນດີສ່ວນຈີວອນໃນວັດອື່ນອີກ ແມ່ນບໍ?"

ທ່ານພຣະອຸປະນັນທະທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າພຸດທະເຈົ້າຊົງຕຳໜິວ່າ "ຯລຯ ໂມຄະບຸຣຸດ ເປັນຫຍັງທ່ານຈຳພັນສາໃນວັດໜຶ່ງແລ້ວຍັງຍິນດີສ່ວນຈີວອນໃນວັດອື່ນອີກນໍ ໂມຄະບຸຣຸດ ການເຮັດແນວນີ້ບໍ່ໄດ້ເຮັດໃຫ້ຄົນທີ່ຍັງບໍ່ເຫຼື້ອມໃສໃຫ້ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸຈຳພັນສາໃນວັດໜຶ່ງແລ້ວ ບໍ່ເພິ່ງຍິນດີສ່ວນຈີວອນໃນວັດອື່ນອີກ ອົງໃດຍິນດີ ຕ້ອງອາບັດທຸກກົດ"

## ເລື້ອງພຣະອຸປະນັນທະຈຳພັນສາໃນ ໒ ອາວາດ

ສະໄໝນັ້ນ ທ່ານພຣະອຸປະນັນທະສາກະຍະບຸດອົງດຽວຈຳພັນສາຢູ່ໃນ ໒ ອາວາດຍ້ອນຄິດວ່າ "ດ້ວຍອຸບາຍນີ້ ຈີວອນຈະເກີດຂຶ້ນແກ່ເຮົາຫຼາຍ"

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນໄດ້ມີຄວາມຄິດດັ່ງນີ້ວ່າ "ພວກເຮົາຈະໃຫ້ສ່ວນແບ່ງແກ່ທ່ານພຣະອຸປະນັນທະສາກະຍະບຸດແນວໃດນໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ພວກທ່ານຈົ່ງໃຫ້ຕາມຄວາມປະສົງສ່ວນໜຶ່ງແກ່ໂມຄະບຸຣຸດ ພິກຂຸທັງຫຼາຍ ໃນກໍລະນີທີ່ພິກຂຸອົງດຽວຈຳພັນສາຢູ່ໃນ ໔ ອາວາດ ຍ້ອນຄິດວ່າ ດ້ວຍອຸບາຍນີ້ຈີວອນຈະເກີດຂຶ້ນແກ່ເຮົາຫຼາຍ ຖ້າພິກຂຸຈຳພັນສາໃນອາວາດນັ້ນເຄິ່ງໜຶ່ງ ໃນອາວາດນັ້ນອີກເຄິ່ງໜຶ່ງ ກໍເພິ່ງໃຫ້ສ່ວນຈີວອນອາວາດລະເຄິ່ງໜຶ່ງ ຫຼືໃຫ້ສ່ວນຈີວອນໃນອາວາດທີ່ທ່ານຈຳພັນສາຫຼາຍກວ່າ"

## ໔໔໔. ຄິລານະວັດຖຸກະຖາ

## ວ່າດ້ວຍພິກຂຸໄຂ້

## ເລື້ອງພິກຂຸອາພາດເປັນພະຍາດຖອກທ້ອງ

[໓໖໕] ສະໄໝນັ້ນ ພິກຂຸອົງໜຶ່ງອາພາດເປັນພະຍາດຖອກທ້ອງ ພິກຂຸນັ້ນນອນກິ້ງເກືອກໄປມາເທິງປັດສາວະແລະອຸດຈາຣະຂອງຕົນເອງ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າມີທ່ານພຣະອານົນຕາມສະເດັດ ສະເດັດຈາຣິກໄປຕາມເສນາສະນະ ສະເດັດເຂົ້າໄປທາງທີ່ຢູ່ຂອງພິກຂຸນັ້ນ ໄດ້ທອດພຣະເນດເຫັນພິກຂຸນັ້ນນອນກິ້ງເກືອກໄປມາເທິງປັດສາວະແລະອຸດຈາຣະຂອງຕົນເອງ ຈຶ່ງສະເດັດເຂົ້າໄປໃກ້ແລ້ວ ໄດ້ຕັດຖາມດັ່ງນີ້ວ່າ "ພິກຂຸ ທ່ານອາພາດເປັນພະຍາດອັນໃດ"

ພິກຂຸນັ້ນທູນວ່າ "ຂ້າພຣະອົງອາພາດເປັນພະຍາດຖອກທ້ອງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ທ່ານມີພິກຂຸຜູ້ຄອຍປິ່ນປົວບໍ"

ພິກຂຸນັ້ນທູນວ່າ "ບໍ່ມີ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ເຫດໃດ ພວກພິກຂຸຈຶ່ງບໍ່ຄອຍປິ່ນປົວທ່ານ"

ພິກຂຸນັ້ນທູນວ່າ "ຍ້ອນຂ້າພຣະອົງບໍ່ໄດ້ກະທຳອຸປະກາຣະແກ່ພິກຂຸທັງຫຼາຍ ດັ່ງນັ້ນພວກພິກຂຸຈຶ່ງບໍ່ຄອຍປິ່ນປົວຂ້າພຣະອົງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຮຽກທ່ານພຣະອານົນມາຮັບສັ່ງວ່າ "ອານົນ ທ່ານໄປຕັກນ້ຳມາ ເຮົາຈະອາບນ້ຳໃຫ້ພິກຂຸນີ້"

ທ່ານພຣະອານົນທູນຮັບສະໜອງພຣະດຳຣັດແລ້ວຕັກນ້ຳມາຖວາຍ ພຣະຜູ້ມີພຣະພາກເຈົ້າຊົງຫົດນ້ຳ ທ່ານພຣະອານົນຂັດສີ ພຣະຜູ້ມີພຣະພາກເຈົ້າຊົງປະຄອງຫົວຂຶ້ນ ທ່ານພຣະອານົນຍົກຕີນວາງເທິງຕຽງ

ຕໍ່ມາ ພຣະຜູ້ມີພຣະພາກເຈົ້າຣັບສັ່ງໃຫ້ປະຊຸມສົງຍ້ອນເລື່ອງນີ້ເປັນຕົ້ນເຫດ ຊົງສອບຖາມພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ໃນວິຫານຫຼັງນັ້ນມີພິກຂຸເປັນໄຂ້ບໍ"

ພວກພິກຂຸຂາບທູນວ່າ "ມີ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ທ່ານອາພາດເປັນພະຍາດອັນໃດ"

ພວກພິກຂຸຂາບທູນວ່າ "ທ່ານອາພາດເປັນພະຍາດຖອກທ້ອງ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸນັ້ນມີພິກຂຸຜູ້ຄອຍປິ່ນປົວບໍ"

ພວກພິກຂຸຂາບທູນວ່າ "ບໍ່ມີ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ເຫດໃດ ພວກພິກຂຸຈຶ່ງບໍ່ຄອຍປິ່ນປົວທ່ານ"

ພວກພິກຂຸຂາບທູນວ່າ "ຍ້ອນທ່ານບໍ່ໄດ້ກະທຳອຸປະກາຣະແກ່ພິກຂຸທັງຫຼາຍ ດັ່ງນັ້ນພວກພິກຂຸຈຶ່ງບໍ່ຄອຍປິ່ນປົວທ່ານ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ພວກທ່ານບໍ່ມີມານດາ ບໍ່ມີບິດາຜູ້ຄອຍປິ່ນປົວ ພິກຂຸທັງຫຼາຍ ຖ້າພວກທ່ານບໍ່ປິ່ນປົວກັນເອງ ໃຜນໍຈະຄອຍປິ່ນປົວພວກທ່ານ ພິກຂຸທັງຫຼາຍ ຜູ້ຈະປິ່ນປົວເຮົາກໍຈົ່ງປິ່ນປົວພິກຂຸໄຂ້ເທີ້ນ ຖ້າມີອຸປັດຊາ ອຸປັດຊາເພິ່ງປິ່ນປົວພິກຂຸໄຂ້ນັ້ນຈົນຕະຫຼອດຊີວິດ(ຫຼື) ຈົນກວ່າທ່ານຈະຫາຍ ຖ້າມີອາຈານ ອາຈານເພິ່ງປິ່ນປົວພິກຂຸໄຂ້ນັ້ນຈົນຕະຫຼອດຊີວິດ (ຫຼື) ຈົນກວ່າທ່ານຈະຫາຍ ຖ້າມີສັດທິວິຫາຣິກ ສັດທິວິຫາຣິກເພິ່ງປິ່ນປົວພິກຂຸໄຂ້ນັ້ນຈົນຕະຫຼອດຊີວິດ (ຫຼື) ຈົນກວ່າທ່ານຈະຫາຍ ຖ້າມີອັນເຕວາສິກ ອັນເຕວາສິກເພິ່ງປິ່ນປົວພິກຂຸໄຂ້ນັ້ນຈົນຕະຫຼອດຊີວິດ (ຫຼື) ຈົນກວ່າທ່ານຈະຫາຍ ຖ້າມີພິກຂຸຜູ້ຮ່ວມອຸປັດຊາ ຜູ້ຮ່ວມອຸປັດຊາເພິ່ງປິ່ນປົວພິກຂຸໄຂ້ນັ້ນຈົນຕະຫຼອດ ຊີວິດ (ຫຼື)ຈົນກວ່າທ່ານຈະຫາຍ ຖ້າມີພິກຂຸຜູ້ຮ່ວມອາຈານ ຜູ້ຮ່ວມອາຈານເພິ່ງປິ່ນປົວພິກຂຸໄຂ້ນັ້ນຈົນຕະຫຼອດຊີວິດ (ຫຼື) ຈົນກວ່າທ່ານຈະຫາຍ ຖ້າບໍ່ມີອຸປັດຊາ ອາຈານ ສັດທິວິຫາຣິກ ອັນເຕວາສິກ ຜູ້ຮ່ວມອຸປັດຊາ ຫຼືຜູ້ຮ່ວມອາຈານສົງຕ້ອງປິ່ນປົວພິກຂຸໄຂ້ນັ້ນ ຖ້າບໍ່ປິ່ນປົວ ຕ້ອງອາບັດທຸກກົດ"

## ເລື່ອງຄົນໄຂ້ທີ່ປິ່ນປົວໄດ້ຍາກແລະປິ່ນປົວໄດ້ງ່າຍ

## ຄົນໄຂ້ທີ່ປິ່ນປົວໄດ້ຍາກມີອາການ ໕ ຢ່າງ

[໓໖໖] ພິກຂຸທັງຫຼາຍ ຄົນໄຂ້ທີ່ມີອາການ ໕ ຢ່າງ ປິ່ນປົວໄດ້ຍາກ ຄື

໑. ບໍ່ເຮັດຄວາມສະບາຍ
໒. ບໍ່ຮູ້ປະມານໃນຄວາມສະບາຍ
໓. ບໍ່ສັນຍາ

໔. ບໍ່ບອກອາການໄຂ້ຕາມເປັນຈິງແກ່ຜູ້ປິ່ນປົວໄຂ້ທີ່ມຸ້ງປະໂຫຍດ ຄື ບໍ່ບອກອາການໄຂ້ທີ່ກຳເຣີບວ່າກຳເຣີບ ອາການໄຂ້ທີ່ທຸເລົາວ່າທຸເລົາ ອາການໄຂ້ທີ່ຊົງຢູ່ວ່າຊົງຢູ່

໕. ເປັນຄົນບໍ່ອົດທົນຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນ ເປັນທຸກແສນສາຫັດ ກ້າແຂງ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ແທບຈະພາກຊີວິດ

ພິກຂຸທັງຫຼາຍ ຄົນໄຂ້ທີ່ມີອາການ ໕ ຢ່າງນີ້ແລ ປິ່ນປົວໄດ້ຍາກ

## ຄົນໄຂ້ທີ່ປິ່ນປົວໄດ້ງ່າຍມີອາການ ໕ ຢ່າງ

ພິກຂຸທັງຫຼາຍ ຄົນໄຂ້ທີ່ມີອາການ ໕ ຢ່າງ ປິ່ນປົວໄດ້ງ່າຍ ຄື

໑. ເຮັດຄວາມສະບາຍ

໒. ຮູ້ປະມານໃນຄວາມສະບາຍ

໓. ສັນຢາ

໔. ບອກອາການໄຂ້ຕາມເປັນຈິງແກ່ຜູ້ປິ່ນປົວໄຂ້ທີ່ມຸ້ງປະໂຫຍດ ຄື ບອກອາການໄຂ້ທີ່ກຳເຣີບວ່າກຳເຣີບ ອາການໄຂ້ທີ່ທຸເລົາວ່າທຸເລົາ ອາການໄຂ້ທີ່ຊົງຢູ່ວ່າຊົງຢູ່

໕. ເປັນຄົນອົດທົນຕໍ່ຄວາມຮູ້ສຶກທາງກາຍທີ່ເກີດຂຶ້ນ ເປັນທຸກແສນສາຫັດ ກ້າແຂງ ເຜັດຮ້ອນ ບໍ່ໜ້າຍິນດີ ບໍ່ໜ້າພໍໃຈ ແທບຈະພາກຊີວິດ

ພິກຂຸທັງຫຼາຍ ຄົນໄຂ້ທີ່ມີອາການ ໕ ຢ່າງນີ້ແລ ປິ່ນປົວໄດ້ງ່າຍ

## ບຸກຄົນຜູ້ປະກອບດ້ວຍອົງ ໕ ບໍ່ຄວນປິ່ນປົວພິກຂຸໄຂ້

ພິກຂຸທັງຫຼາຍ ຜູ້ປິ່ນປົວພິກຂຸໄຂ້ທີ່ປະກອບດ້ວຍອົງ ໕ ບໍ່ຄວນປິ່ນປົວຄົນໄຂ້ ຄື

໑. ບໍ່ສາມາດຈັດຢາ

໒. ບໍ່ຮູ້ຈັກຂອງສະແຫຼງແລະບໍ່ສະແຫຼງ ຄື ນຳຂອງສະແຫຼງເຂົ້າໄປໃຫ້ ນຳຂອງບໍ່ສະແຫຼງອອກໄປ

໓. ປິ່ນປົວຄົນໄຂ້ຍ້ອນເຫັນແກ່ອາມິດ ບໍ່ມີຈິດເມດຕາ

໔. ລັງກຽດທີ່ຈະນຳອຸດຈາຣະ ປັດສາວະ ນ້ຳລາຍຫຼືຂອງທີ່ອາຈຽນອອກມາ ໄປຖອກຖິ້ມ

໕. ບໍ່ສາມາດເວົ້າໃຫ້ຄົນໄຂ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ເປັນບາງເທື່ອບາງເວລາ

ພິກຂຸທັງຫຼາຍ ຜູ້ປິ່ນປົວພິກຂຸໄຂ້ທີ່ປະກອບດ້ວຍອົງ ໕ ນີ້ແລ ບໍ່ຄວນປິ່ນປົວຄົນໄຂ້

## ບຸກຄົນຜູ້ປະກອບດ້ວຍອົງ ໕ ຄວນປິ່ນປົວພິກຂຸໄຂ້

ພິກຂຸທັງຫຼາຍ ພິກຂຸຜູ້ປິ່ນປົວພິກຂຸໄຂ້ທີ່ປະກອບດ້ວຍອົງ ໕ ຄວນປິ່ນປົວພິກຂຸໄຂ້ ຄື

໑. ສາມາດຈັດຢາ
໒. ຮູ້ຈັກຂອງສະແຫຼງແລະບໍ່ສະແຫຼງ ຄື ນຳຂອງສະແຫຼງອອກໄປ ນຳຂອງບໍ່ສະແຫຼງເຂົ້າມາໃຫ້
໓. ບໍ່ປິ່ນປົວຄົນໄຂ້ຍ້ອນເຫັນແກ່ອາມິດ ມີຈິດເມດຕາ
໔. ບໍ່ລັງກຽດທີ່ຈະນຳອຸດຈາຣະ ປັດສາວະ ນ້ຳລາຍຫຼືຂອງທີ່ອາຈຽນອອກມາ ໄປຖອກຖິ້ມ
໕. ສາມາດເວົ້າໃຫ້ຄົນໄຂ້ເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານ ແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາ ເປັນບາງເທື່ອ ບາງເວລາ

ພິກຂຸທັງຫຼາຍ ຜູ້ປິ່ນປົວພິກຂຸໄຂ້ທີ່ປະກອບດ້ວຍອົງ ໕ ນີ້ແລ ຄວນປິ່ນປົວຄົນໄຂ້

## ໔໔໕. ມະຕະສັນຕະກະກະຖາ
## ວ່າດ້ວຍການໃຫ້ບໍຣິຂານຂອງພິກຂຸມໍຣະນະພາບແກ່ຜູ້ປິ່ນປົວໄຂ້
## ເລື້ອງພິກຂຸແລະສາມະເນນເປັນໄຂ້

[໓໖໗] ສະໄໝນັ້ນ ພິກຂຸ ໒ ອົງເດີນທາງໄກໄປໃນແຄວ້ນໂກສົນ ທ່ານທັງ ໒ ເດີນທາງໄປສູ່ອາວາດແຫ່ງໜຶ່ງ ພິກຂຸອົງໜຶ່ງໃນອາວາດນັ້ນເປັນໄຂ້

ລຳດັບນັ້ນ ພິກຂຸເຫຼົ່ານັ້ນໄດ້ເປີກສາກັນດັ່ງນີ້ວ່າ "ທ່ານທັງຫຼາຍ ພຣະຜູ້ມີພຣະພາກເຈົ້າຊົງສັນເສີນການປິ່ນປົວພິກຂຸໄຂ້ ພວກເຮົາຈົ່ງປິ່ນປົວພິກຂຸອົງນີ້ກັນເທີ້ນ" ແລ້ວພາກັນ ປິ່ນປົວພິກຂຸໄຂ້ນັ້ນ ທ່ານໄດ້ຮັບການປິ່ນປົວຢູ່ໄດ້ມໍຣະນະພາບລົງ

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນຖືເອົາບາດແລະຈີວອນຂອງທ່ານໄປນະຄອນສາວັດຖີ ແລ້ວຂາບທູນເລື້ອງນັ້ນໃຫ້ພຣະຜູ້ມີພຣະພາກເຈົ້າໃຫ້ຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ເມື່ອພິກຂຸມໍຣະນະພາບ ສົງເປັນເຈົ້າຂອງບາດ ແລະຈີວອນແຕ່ພິກຂຸຜູ້ປິ່ນປົວພິກຂຸໄຂ້ເປັນຜູ້ມີອຸປະກາຣະຫຼາຍ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົງມອບໄຕຣຈີວອນແລະບາດແກ່ພິກຂຸຜູ້ປິ່ນປົວພິກຂຸໄຂ້"

## ວິທີມອບໃຫ້ໄຕຣຈີວອນ ບາດ ແລະກຳມະວາຈາສຳລັບມອບໃຫ້

ພິກຂຸທັງຫຼາຍ ສົງເພິ່ງໃຫ້ໄຕຣຈີວອນແລະບາດແນວນີ້ ຄື ພິກຂຸປິ່ນປົວພິກຂຸໄຂ້ນັ້ນເພິ່ງເຂົ້າໄປຫາສົງແລ້ວກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ພິກຂຸຊື່ນີ້ມໍຣະນະພາບແລ້ວ ນີ້ ຄືໄຕຣຈີວອນແລະບາດຂອງທ່ານ"

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາ ວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ມໍຣະນະພາບແລ້ວ ນີ້ຄືໄຕຣຈີວອນແລະບາດຂອງທ່ານ ສົງເພິ່ງໃຫ້ໄຕຣຈີວອນແລະບາດນີ້ແກ່ພິກຂຸຜູ້ປິ່ນປົວພິກຂຸໄຂ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ພິກຂຸຊື່ນີ້ມໍຣະນະພາບແລ້ວ ນີ້ຄືໄຕຣຈີວອນແລະບາດຂອງທ່ານ ສົງໃຫ້ໄຕຣຈີວອນແລະບາດນີ້ແກ່ພິກຂຸຜູ້ປິ່ນປົວພິກຂຸໄຂ້ ທ່ານອົງໃດເຫັນດ້ວຍກັບການໃຫ້ໄຕຣຈີວອນແລະບາດນີ້ແກ່ພິກຂຸຜູ້ປິ່ນປົວພິກຂຸໄຂ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສົງໃຫ້ໄຕຣຈີວອນແລະບາດນີ້ແກ່ພິກຂຸຜູ້ປິ່ນປົວພິກຂຸໄຂ້ແລ້ວສົງເຫັນດ້ວຍຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ສາມະເນນມໍຣະນະພາບ

[໓໖໗] ສະໄໝນັ້ນ ສາມະເນນອົງໜຶ່ງມໍຣະນະພາບ ພິກຂຸທັງຫຼາຍໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເມື່ອສາມະເນນມໍຣະນະພາບ ສົງເປັນເຈົ້າຂອງບາດແລະຈີວອນ ແຕ່ພິກຂຸຜູ້ປິ່ນປົວພິກຂຸໄຂ້ເປັນຜູ້ມີອຸປະກາຣະຫຼາຍ ພິກຂຸທັງຫຼາຍເຮົາອະນຸຍາດໃຫ້ສົງມອບຈີວອນແລະບາດແກ່ພິກຂຸຜູ້ປິ່ນປົວພິກຂຸໄຂ້"

## ວິທີມອບຈີວອນແລະບາດໃຫ້ ແລະກຳມະວາຈາສຳລັບມອບໃຫ້

ພິກຂຸທັງຫຼາຍ ສົງເພິ່ງໃຫ້ຈີວອນແລະບາດແນວນີ້ ຄື ພິກຂຸຜູ້ປິ່ນປົວພິກຂຸໄຂ້ນັ້ນເພິ່ງເຂົ້າໄປຫາສົງແລ້ວກ່າວແນວນີ້ວ່າ "ທ່ານຜູ້ຈະເລີນ ສາມະເນນຊື່ນີ້ມໍຣະນະພາບແລ້ວ ນີ້ຄືຈີວອນແລະບາດຂອງທ່ານ"

ພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສາມະເນນຊື່ນີ້ມໍຣະນະພາບແລ້ວ ນີ້ຄືຈີວອນ ແລະ ບາດຂອງທ່ານ ຖ້າສົງພ້ອມກັນແລ້ວ ເພິ່ງໃຫ້ຈີວອນແລະບາດນີ້ແກ່ພິກຂຸຜູ້ປິ່ນປົວສາມະເນນໄຂ້ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ສາມະເນນຊື່ນີ້ມໍຣະນະພາບແລ້ວ ນີ້ຄືຈີວອນ ແລະ ບາດຂອງທ່ານ ສົງໃຫ້ຈີວອນແລະບາດນີ້ແກ່ພິກຂຸຜູ້ປິ່ນປົວສາມະເນນໄຂ້ ທ່ານອົງໃດເຫັນດ້ວຍກັບການໃຫ້ຈີວອນແລະບາດນີ້ແກ່ພິກຂຸຜູ້ປິ່ນປົວສາມະເນນໄຂ້ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສົງໃຫ້ຈີວອນແລະບາດນີ້ແກ່ພິກຂຸຜູ້ປິ່ນປົວສາມະເນນໄຂ້ແລ້ວ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

## ພິກຂຸສາມະເນນຊ່ອຍກັນປິ່ນປົວໄຂ້

[໓໖໙] ສະໄໝນັ້ນ ພິກຂຸແລະສາມະເນນຊ່ອຍກັນປິ່ນປົວພິກຂຸໄຂ້ ທ່ານໄດ້ຮັບການປິ່ນປົວຢູ່ໄດ້ມໍຣະນະພາບລົງ ລຳດັບນັ້ນ ພິກຂຸຜູ້ປິ່ນປົວໄຂ້ໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາເພິ່ງໃຫ້ສ່ວນຈີວອນແກ່ສາມະເນນຜູ້ປິ່ນປົວໄຂ້ແນວໃດນໍ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້
ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ມອບສ່ວນຈີວອນແກ່ສາມະເນນຜູ້ປິ່ນປົວໄຂ້ທໍ່ ໆ ກັນ"
ສະໄໝນັ້ນ ພິກຂຸອົງໜຶ່ງມີເຄື່ອງບໍຣິຂານຫຼາຍ ມໍຣະນະພາບລົງ
ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ເມື່ອພິກຂຸມໍຣະນະພາບ ສົງເປັນເຈົ້າຂອງ ບາດແລະຈີວອນ ແຕ່ຜູ້ປິ່ນປົວໄຂ້ເປັນຜູ້ມີອຸປະກາຣະຫຼາຍ ພິກຂຸທັງຫຼາຍ ເຮົາອະນຸຍາດໃຫ້ສົງມອບໄຕຣຈີວອນແລະບາດແກ່ພິກຂຸຜູ້ປິ່ນປົວໄຂ້ ບັນດາສິ່ງຂອງເຫຼົ່ານັ້ນ ເຮົາອະນຸຍາດໃຫ້ສົງພ້ອມໃຈກັນແບ່ງລະຫຸພັນແລະລະຫຸບໍຣິຂານ ສ່ວນຄະຣຸພັນແລະຄະຣຸບໍຣິຂານ ເປັນຂອງສົງຜູ້ຢູ່ໃນຈຕຸນທິດທັງທີ່ເດີນທາງມາແລະຍັງບໍ່ມາ ເປັນຂອງທີ່ບໍ່ຄວນແຈກບໍ່ຄວນແບ່ງ"

## ໔໔໕. ນັກຄິຍະປະຕິກເຂປະກະຖາ

### ວ່າດ້ວຍຊົງຫ້າມເປືອຍກາຍ

### ເລື້ອງພິກຂຸເປືອຍກາຍ

[໓໗໐] ສະໄໝນັ້ນ ພິກຂຸອົງໜຶ່ງເປືອຍກາຍເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບແລ້ວໄດ້ຂາບທູນດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດສັນເສີນຄວາມມັກໜ້ອຍ ສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມການພາຣົບຄວາມພຽນໂດຍປະການຕ່າງ ໆ ການເປືອຍກາຍນີ້ຍ່ອມເປັນໄປເພື່ອຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການໜ້າເຫຼື້ອມໃສ ການບໍ່ສະສົມ ການພາຣົບຄວາມພຽນໂດຍປະການຕ່າງ ໆ ຂໍປະທານວະໂຣກາດ ພຣະຜູ້ມີພຣະພາກຊົງໂຜດອະນຸຍາດການເປືອຍກາຍແກ່ພິກຂຸເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ

ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງໄດ້ສະມາທານການເປືອຍກາຍທີ່ພວກເດຍຣະຖີເຮັດກັນນໍ ໂມຄະບຸຣຸດ ການເຮັດແນວນີ້ບໍ່ໄດ້ເປັນໄປເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງສະມາທານການເປືອຍກາຍທີ່ພວກເດຍຣະຖີເຮັດກັນ ອົງໃດສະມາທານ ຕ້ອງອາບັດຖຸນລັດໄຈ"

## ໔໔໖. ກຸສະຈີຣາທິປະຕິກເຂປະກະຖາ

### ວ່າດ້ວຍຊົງຫ້າມຜ້າຄາກອງເປັນຕົ້ນ

### ເລື້ອງພິກຂຸນຸ່ງຜ້າຄາກອງເປັນຕົ້ນ

[໓໗໑] ສະໄໝນັ້ນ ພິກຂຸອົງໜຶ່ງນຸ່ງຜ້າຄາກອງ ຯລຯ ນຸ່ງເປືອກໄມ້ ຯລຯ ນຸ່ງຜ້າໝາກໄມ້ ຯລຯ ນຸ່ງຜ້າທໍດ້ວຍຜົມຄົນ ຯລຯ ນຸ່ງຜ້າທໍດ້ວຍຂົນສັດ ຯລຯ ນຸ່ງຜ້າທໍດ້ວຍຂົນປີກນົກເຄົ້າ ຯລຯ ນຸ່ງໜັງເສືອແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ

ໄດ້ຂາບທູນດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດສັນເສີນຄວາມມັກ ໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການທີ່ໜ້າເຫຼື້ອມໃສ ການບໍ່

ສະສົມ ການຜາຣົບຄວາມພຽນໂດຍປະການຕ່າງ ໆ ໜັງເສືອນີ້ຍ່ອມເປັນໄປເພື່ອຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການທີ່ໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນໂດຍປະການຕ່າງ ໆ ຂໍປະທານອະໂອກາດ ພຣະຜູ້ມີພຣະພາກເຈົ້າຊົງໂຜດອະນຸຍາດໜັງເສືອ ແກ່ພິກຂຸທັງຫຼາຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ເປັນຫຍັງທ່ານຈຶ່ງໄດ້ໃຊ້ ໜັງເສືອອັນເປັນສັນຍະລັກຂອງເດຍຣະຖີນໍ ໂມຄະບຸຣຸດ ການເຮັດແນວນີ້ ບໍ່ໄດ້ເປັນໄປເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາ ຣັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງໃຊ້ໜັງເສືອອັນເປັນສັນຍະລັກຂອງເດຍຣະຖີ ອົງໃດໃຊ້ ຕ້ອງອາບັດຖຸນລັດໄຈ"

## ເລື້ອງພິກຂຸນຸ່ງຜ້າເຮັດດ້ວຍກ້ານດອກຮັກເປັນຕົ້ນ

ຕໍ່ມາ ພິກຂຸອົງໜຶ່ງນຸ່ງຜ້າເຮັດດ້ວຍກ້ານດອກຮັກ ຯລຯ ນຸ່ງຜ້າເຮັດດ້ວຍເປືອກປໍແລ້ວເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ໄດ້ຂາບທູນດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພຣະຜູ້ມີພຣະພາກເຈົ້າຕັດສັນເສີນຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການທີ່ ໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນໂດຍປະການຕ່າງ ໆ ຜ້າເຮັດດ້ວຍເປືອກປໍນີ້ຍ່ອມເປັນໄປເພື່ອຄວາມມັກໜ້ອຍ ຄວາມສັນໂດດ ຄວາມຂັດເກົາ ຄວາມກຳຈັດ ອາການທີ່ໜ້າເຫຼື້ອມໃສ ການບໍ່ສະສົມ ການຜາຣົບຄວາມພຽນໂດຍປະການຕ່າງ ໆ ຂໍປະທານອະໂອກາດ ພຣະຜູ້ມີພຣະພາກເຈົ້າຊົງໂຜດອະນຸຍາດຜ້າເປືອກປໍແກ່ພິກຂຸທັງຫຼາຍເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດ ການກະທຳຂອງທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ

ໂມຄະບຸຣຸດ ເປັນຫຍັງທ່ານຈຶ່ງໄດ້ນຸ່ງຜ້າເປືອກປໍນໍ ໂມຄະບຸຣຸດ ການເຮັດແນວນີ້ ບໍ່ໄດ້ເປັນໄປເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຣັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງນຸ່ງຜ້າເຮັດດ້ວຍເປືອກປໍ ອົງໃດນຸ່ງ ຕ້ອງອາບັດທຸກກົດ"

## ໔໔໗. ສັບພະນີລະກາທິປະຕິກເຂປະກະຖາ

### ວ່າດ້ວຍຊົງຫ້າມຈີວອນສີຂຽວລ້ວນເປັນຕົ້ນ

### ເລື້ອງພຣະສັບພັກຄີຫົ່ມຈີວອນສີຂຽວລ້ວນເປັນຕົ້ນ

[໓໗໔] ສະໄໝນັ້ນ ພວກພິກຂຸສັບພັກຄີຫົ່ມຈີວອນສີຂຽວລ້ວນ ຯລຯ ຫົ່ມຈີວອນສີເຫຼືອງລ້ວນ ຯລຯ ຫົ່ມຈີວອນສີແດງລ້ວນ ຯລຯ ຫົ່ມຈີວອນສີບານເຢັນລ້ວນ ຯລຯ ຫົ່ມຈີວອນສີດຳລ້ວນ ຯລຯ ຫົ່ມຈີວອນສີແສດລ້ວນ ຯລຯ ຫົ່ມຈີວອນສີຊົມພູລ້ວນ ຯລຯ ຫົ່ມຈີວອນທີ່ບໍ່ຕັດຊາຍ ຯລຯ ຫົ່ມຈີວອນມີຊາຍຍາວ ຯລຯ ຫົ່ມຈີວອນມີຊາຍເປັນລາຍດອກໄມ້ ຯລຯ ຫົ່ມຈີວອນມີຊາຍເປັນແຜ່ນ ຯລຯ ໃສ່ເສື້ອ ຯລຯ ໃສ່ໝວກ ຯລຯ ໂພກຫົວ

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ “ເປັນຫຍັງພຣະສະມະນະເຊື້ອສາຍພຣະສາກະຍະບຸດຈຶ່ງໃຊ້ຜ້າໂພກຫົວຄືຄະລືຫັດຜູ້ບໍຣິໂພກກາມນໍ”

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ “ພິກຂຸທັງຫຼາຍ ພິກຂຸບໍ່ເພິ່ງຫົ່ມຈີວອນສີຂຽວລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີເຫຼືອງລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີແດງລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີບານເຢັນລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີດຳລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີແສດລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນສີຊົມພູລ້ວນ ຯລຯ ບໍ່ເພິ່ງຫົ່ມຈີວອນທີ່ບໍ່ຕັດຊາຍ ຯລຯ ບໍ່ເພິ່ງຫົ່ມຈີວອນມີຊາຍຍາວ ຯລຯ ບໍ່ເພິ່ງຫົ່ມຈີວອນມີຊາຍລາຍດອກໄມ້ ຯລຯ ບໍ່ເພິ່ງຫົ່ມຈີວອນມີຊາຍເປັນແຜ່ນ ຯລຯບໍ່ເພິ່ງໃສ່ເສື້ອ ຯລຯ ບໍ່ເພິ່ງໃສ່ໝວກ ຯລຯ ບໍ່ເພິ່ງໃຊ້ຜ້າໂພກຫົວ ອົງໃດໃຊ້ ຕ້ອງອາບັດທຸກກົດ”

## ໔໔໘. ວັດສັງວຸດຖານັງອະນຸບປັນນະຈີວະຣະກະຖາ

### ວ່າດ້ວຍຈີວອນຍັງບໍ່ເກີດແກ່ພິກຂຸຜູ້ຈຳພັນສາ

### ເລື້ອງຈີວອນຍັງບໍ່ເກີດຂຶ້ນພິກຂຸຫຼີກໄປ

[໓໗໕] ສະໄໝນັ້ນ ພວກພິກຂຸທີ່ຈຳພັນສາແລ້ວ ເມື່ອຈີວອນຍັງບໍ່ເກີດຂຶ້ນ ພາກັນຫຼີກໄປແດ່ ສິກແດ່ ມໍຣະນະພາບແດ່ ປະຕິຍານເປັນສາມະເນນແດ່ ປະຕິຍານເປັນຜູ້ບອກລາສິກຂາແດ່ ປະຕິຍານເປັນຜູ້ຕ້ອງອັນຕິມະວັດຖຸແດ່[១] ປະຕິຍານເປັນຄົນວິກົນຈະລິດແດ່ ປະຕິຍານເປັນຄົນມີຈິດຟຸ້ງຊ່ານແດ່ ປະຕິຍານເປັນຄົນກະສັບກະສ່າຍຍ້ອນເວທະນາແດ່ ປະຕິຍານເປັນຜູ້ຖືກສົງລົງ

ອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດແດ່ ປະຕິຍານເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແດ່ ປະຕິຍານເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແດ່ ປະຕິຍານເປັນບັນເດາະແດ່[໒] ປະຕິຍານເປັນຄົນລັກເພດແດ່[໑] ປະຕິຍານເປັນຜູ້ເຂົ້າຮີດເດຍຣະຖີແດ່ ປະຕິຍານເປັນສັດເດຍຣັດສານແດ່ ປະຕິຍານເປັນຜູ້ຂ້າມານດາແດ່ ປະຕິຍານເປັນຜູ້ຂ້າບິດາແດ່ ປະຕິຍານເປັນຜູ້ຂ້າພຣະອະຣະຫັນແດ່ ປະຕິຍານເປັນຜູ້ປະທຸດສະຮ້າຍພິກຂຸນີແດ່ ປະຕິຍານເປັນຜູ້ທຳລາຍສົງແດ່ ປະຕິຍານເປັນຜູ້ທຳຮ້າຍພຣະສາດສະດາຈົນເຖິງຫໍ້ພຣະໂລຫິດແດ່ ປະຕິຍານເປັນອຸພະໂຕພະຍັນຊະນະກະແດ່[໒]

ພິກຂຸທັງຫຼາຍ ຈຶ່ງໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

[໑໗໔] ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຈຳພັນສາແລ້ວ ຫຼີກໄປສາເມື່ອຈີວອນຍັງບໍ່ເກີດຂຶ້ນ ເມື່ອມີຜູ້ຮັບແທນທີ່ສົມຄວນ ສົງກໍເພິ່ງໃຫ້

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທີ່ຈຳພັນສາແລ້ວ ເມື່ອຈີວອນຍັງບໍ່ເກີດຂຶ້ນ ສິກໄປ ມໍຣະນະພາບລົງ ປະຕິຍານເປັນສາມະເນນ ປະຕິຍານເປັນຜູ້ບອກລາສິກຂາ ເປັນຜູ້ຕ້ອງອັນຕິມະວັດຖຸ ສົງເປັນເຈົ້າຂອງ (ຈີວອນນັ້ນ)

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທີ່ຈຳພັນສາແລ້ວເມື່ອຈີວອນຍັງບໍ່ເກີດຂຶ້ນ ປະຕິຍານເປັນຄົນວິກົນຈະລິດ ປະຕິຍານເປັນຄົນມີຈິດຟຸ້ງຊ່ານ ປະຕິຍານເປັນຄົນກະສັບກະສ່າຍຍ້ອນເວທະນາ ປະຕິຍານເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ ປະຕິຍານເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະຕິຍານເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ລະທິດຖິບາບ ເມື່ອມີຜູ້ຮັບແທນທີ່ສົມຄວນ ສົງກໍເພິ່ງໃຫ້

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທີ່ຈຳພັນສາແລ້ວເມື່ອຈີວອນຍັງບໍ່ເກີດຂຶ້ນ ປະຕິຍານເປັນບັນເດາະ ປະຕິຍານເປັນຄົນລັກເພດ ປະຕິຍານເປັນຜູ້ເຂົ້າຮີດເດຍຣະຖີ ປະຕິຍານເປັນສັດເດຍຣັດສານ ປະຕິຍານເປັນຜູ້ຂ້າມານດາ ປະຕິຍານເປັນຜູ້ຂ້າບິດາ ປະຕິຍານເປັນຜູ້ຂ້າພຣະອະຣະຫັນ ປະຕິຍານເປັນຜູ້ປະທຸດສະຮ້າຍພິກຂຸນີ ປະຕິຍານເປັນຜູ້ທຳລາຍສົງ ປະຕິຍານເປັນຜູ້ທຳຮ້າຍພຣະສາດສະດາຈົນເຖິງຫໍ້ພຣະໂລຫິດ ປະຕິຍານເປັນອຸພະໂຕພະຍັນຊະນະກະ ສົງເປັນເຈົ້າຂອງຈີວອນນັ້ນ

[໑໗໕] ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທີ່ຈຳພັນສາແລ້ວຫຼີກໄປ ເມື່ອຈີວອນເກີດຂຶ້ນແລ້ວແຕ່ຍັງບໍ່ໄດ້ແບ່ງກັນ ເມື່ອມີຜູ້ຮັບແທນທີ່ສົມຄວນ ສົງເພິ່ງໃຫ້

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທີ່ຈຳພັນສາແລ້ວ ເມື່ອຈີວອນເກີດຂຶ້ນແລ້ວແຕ່ຍັງບໍ່ໄດ້ແບ່ງກັນ ສິກໄປ ມໍຣະນະພາບລົງ ປະຕິຍານເປັນສາມະເນນ ປະຕິຍານເປັນຜູ້ບອກລາສິກຂາ ປະຕິຍານເປັນຜູ້ຕ້ອງອັນຕິມະວັດຖຸ ສົງເປັນເຈົ້າຂອງ (ຈີວອນນັ້ນ)

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທີ່ຈຳພັນສາແລ້ວ ເມື່ອຈີວອນເກີດຂຶ້ນແລ້ວແຕ່ຍັງບໍ່ໄດ້ແບ່ງກັນ ປະຕິຍານເປັນຄົນວິກົນຈະລິດ ປະຕິຍານເປັນຄົນມີຈິດຟຸ້ງຊ່ານ ປະຕິຍານເປັນຄົນກະສັບກະສ່າຍຍ້ອນເວທະນາ ປະຕິຍານເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ ປະຕິຍານເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ປະຕິຍານເປັນຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ເມື່ອມີຜູ້ຮັບແທນທີ່ສົມຄວນ ສົງກໍເພິ່ງໃຫ້

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸທີ່ຈຳພັນສາແລ້ວ ເມື່ອຈີວອນເກີດຂຶ້ນແລ້ວແຕ່ຍັງບໍ່ໄດ້ແບ່ງກັນ ປະຕິຍານເປັນບັນເດາະ ປະຕິຍານເປັນຄົນລັກເພດ ປະຕິຍານເປັນຜູ້ໄປເຂົ້າຮີດເດຍຣະຖີ ປະຕິຍານເປັນສັດເດຍຣັດສານ ປະຕິຍານເປັນຜູ້ຂ້າມານດາ ປະຕິຍານເປັນຜູ້ຂ້າບິດາ ປະຕິຍານເປັນຜູ້ຂ້າ ພຣະອະຣະຫັນ ປະຕິຍານເປັນຜູ້ປະທຸດສະຮ້າຍພິກຂຸນີ ປະຕິຍານເປັນຜູ້ທຳລາຍສົງ ປະຕິຍານເປັນຜູ້ທຳຮ້າຍພຣະສາດສະດາຈົນເຖິງຫໍ້ພຣະໂລຫິດ ປະຕິຍານເປັນອຸພະໂຕພະຍັນຊະນະກະ ສົງເປັນເຈົ້າຂອງຈີວອນນັ້ນ

## ໔໘໐. ສັງຄະພິນເນຈີວະຣຸບປາທະກະຖາ

## ວ່າດ້ວຍຄວາມເກີດຂຶ້ນແຫ່ງຈີວອນເມື່ອສົງແຕກກັນ

## ເລື້ອງສົງແຕກກັນ

[໓໗໖] ພິກຂຸທັງຫຼາຍ ໃນກໍລະນີນີ້ ເມື່ອຈີວອນຍັງບໍ່ເກີດຂຶ້ນແກ່ພິກຂຸທັງຫຼາຍທີ່ຈຳພັນສາແລ້ວ ສົງແຕກກັນ ຄົນທັງຫຼາຍໃນຖິ່ນນັ້ນຖວາຍນ້ຳໃນຝ່າຍໜຶ່ງ ຖວາຍຈີວອນໃນຝ່າຍໜຶ່ງດ້ວຍກ່າວວ່າ “ພວກເຮົາຂໍຖວາຍແກ່ສົງ” ນັ້ນເປັນຂອງສົງທີ່ນັ້ນ

ພິກຂຸທັງຫຼາຍ ໃນກໍລະນີນີ້ ເມື່ອຈີວອນຍັງບໍ່ເກີດຂຶ້ນແກ່ພິກຂຸທັງຫຼາຍທີ່ຈຳພັນສາແລ້ວ ສົງແຕກກັນ ຄົນທັງຫຼາຍໃນຖິ່ນນັ້ນຖວາຍນ້ຳໃນຝ່າຍໜຶ່ງ ຖວາຍຈີວອນໃນຝ່າຍນັ້ນຄືກັນດ້ວຍກ່າວວ່າ “ພວກເຮົາຂໍຖວາຍແກ່ສົງ” ນັ້ນເປັນຂອງສົງທີ່ນັ້ນ

ພິກຂຸທັງຫຼາຍ ໃນກໍລະນີນີ້ ເມື່ອຈີວອນຍັງບໍ່ເກີດຂຶ້ນແກ່ພິກຂຸທັງຫຼາຍທີ່ຈຳພັນສາແລ້ວ ສົງແຕກກັນ ຄົນທັງຫຼາຍໃນຖິ່ນນັ້ນຖວາຍນ້ຳໃນຝ່າຍໜຶ່ງ ຖວາຍຈີວອນໃນຝ່າຍໜຶ່ງດ້ວຍກ່າວວ່າ “ພວກເຮົາຂໍຖວາຍສະເພາະຝ່າຍ” ນັ້ນເປັນຂອງສະເພາະຝ່າຍທີ່ນັ້ນ

ພິກຂຸທັງຫຼາຍ ໃນກໍລະນີນີ້ ເມື່ອຈີວອນຍັງບໍ່ເກີດຂຶ້ນແກ່ພິກຂຸທັງຫຼາຍທີ່ຈຳພັນສາແລ້ວ ສົງແຕກກັນ ຄົນທັງຫຼາຍໃນຖິ່ນນັ້ນຖວາຍນ້ຳໃນຝ່າຍໜຶ່ງ ຖວາຍຈີວອນໃນຝ່າຍນັ້ນຄືກັນດ້ວຍ ກ່າວວ່າ "ພວກເຮົາຂໍຖວາຍສະເພາະຝ່າຍ" ນັ້ນເປັນຂອງສະເພາະຝ່າຍທີ່ນັ້ນ

ພິກຂຸທັງຫຼາຍ ໃນກໍລະນີນີ້ ເມື່ອຈີວອນເກີດຂຶ້ນແກ່ພິກຂຸທັງຫຼາຍທີ່ຈຳພັນສາແລ້ວແຕ່ຍັງ ບໍ່ໄດ້ແບ່ງ ສົງແຕກກັນ ເພິ່ງແບ່ງສ່ວນໃຫ້ພິກຂຸທຸກອົງທີ່ ໆ ກັນ

## ໔໓໑. ທຸກຄະຫິຕະສຸກຄະຫິຕາທິກະຖາ

## ວ່າດ້ວຍຈີວອນທີ່ຖືເອົາບໍ່ດີແລະຖືເອົາດີເປັນຕົ້ນ

## ເລື້ອງພຣະເຣວະຕະຝາກຈີວອນ

[໓໗໗] ສະໄໝນັ້ນ ທ່ານພຣະເຣວະຕະຝາກຈີວອນໄປກັບພິກຂຸອົງໜຶ່ງໃຫ້ນຳໄປຖວາຍ ທ່ານພຣະສາຣີບຸດດ້ວຍສັ່ງວ່າ "ທ່ານຈົ່ງຖວາຍຈີວອນຜືນນີ້ແກ່ພຣະເຖຣະ"

ລຳດັບນັ້ນ ໃນລະຫວ່າງທາງ ພິກຂຸອົງນັ້ນໄດ້ຖືເອົາຈີວອນນັ້ນຍ້ອນວິສາສະກັບທ່ານ ພຣະເຣວະຕະ ຕໍ່ມາ ທ່ານພຣະເຣວະຕະມາພົບທ່ານພຣະສາຣີບຸດຈຶ່ງຖາມວ່າ "ຂ້ານ້ອຍຝາກຈີ ວອນ ມາຖວາຍ ທ່ານໄດ້ຮັບແລ້ວບໍຂ້ານ້ອຍ"

ທ່ານພຣະສາຣີບຸດກ່າວວ່າ "ທ່ານ ຂ້ານ້ອຍຍັງບໍ່ເຫັນຈີວອນນັ້ນເລີຍ"

ຕໍ່ມາ ທ່ານພຣະເຣວະຕະໄດ້ຖາມພິກຂຸຜູ້ຮັບຝາກນັ້ນວ່າ "ທ່ານ ຂ້ານ້ອຍຝາກຈີວອນກັບ ທ່ານໃຫ້ນຳໄປຖວາຍພຣະເຖຣະ ຈີວອນນັ້ນຢູ່ທີ່ໃດ"

ພິກຂຸອົງນັ້ນຕອບວ່າ "ທ່ານ ຂ້ານ້ອຍໄດ້ຖືເອົາຈີວອນນັ້ນແລ້ວຍ້ອນວິສາສະກັບທ່ານ"

ພິກຂຸທັງຫຼາຍ ຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

## ເລື້ອງການຖືເອົາຂອງຝາກໂດຍວິສາສະແລະການອະທິຖານເປັນຈີວອນມໍລະດົກ

## ກໍລະນີທີ ໑ ຝາກໄປດ້ວຍສັ່ງວ່າ "ທ່ານຈົ່ງຖວາຍຯລຯ"

[໓໗໘] ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຝາກຈີວອນ ໄປກັບພິກຂຸດ້ວຍສັ່ງວ່າ "ທ່ານຈົ່ງຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້" ໃນລະຫວ່າງທາງ ພິກຂຸຜູ້ຮັບ ຝາກ ຖືເອົາຈີວອນເອງຍ້ອນວິສາສະກັບພິກຂຸຜູ້ຮັບນັ້ນ ແນວນີ້ຊື່ວ່າຖືເອົາດີ ແຕ່ຖືເອົາຍ້ອນວິສາ ສະກັບຜູ້ຝາກ ຊື່ວ່າຖືເອົາບໍ່ດີ

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຝາກຈີວອນໄປກັບພິກຂຸດ້ວຍສັ່ງວ່າ "ທ່ານຈົ່ງຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້" ໃນລະຫວ່າງທາງ ພິກຂຸຜູ້ຮັບຝາກຖືເອົາເອງຍ້ອນວິສາສະກັບຜູ້ຮັບ ແບບນີ້ຊື່ວ່າຖືເອົາບໍ່ຖືກຕ້ອງ ແຕ່ຖືເອົາຍ້ອນວິສາສະກັບຜູ້ຝາກ ຊື່ວ່າຖືເອົາຖືກຕ້ອງ

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຝາກຈີວອນໄປກັບພິກຂຸດ້ວຍສັ່ງວ່າ "ທ່ານຈົ່ງຖວາຍຈີວອນ ຜືນນີ້ແກ່ພິກຂຸຊື່ນີ້" ໃນລະຫວ່າງທາງ ພິກຂຸຜູ້ຮັບຝາກໄດ້ຮູ້ຂ່າວວ່າ "ຜູ້ຝາກມໍຣະນະພາບສາແລ້ວ" ຈຶ່ງອະທິຖານເປັນຈີວອນມໍລະດົກຂອງພິກຂຸຜູ້ຝາກນັ້ນ ແບບນີ້ຊື່ວ່າອະທິຖານຖືກຕ້ອງ ແຕ່ຖືເອົາເອງຍ້ອນວິສາສະກັບຜູ້ຮັບຊື່ວ່າຖືເອົາບໍ່ຖືກຕ້ອງ

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຝາກຈີວອນໄປກັບພິກຂຸດ້ວຍສັ່ງວ່າ "ທ່ານຈົ່ງຖວາຍຈີວອນ ຜືນນີ້ແກ່ພິກຂຸຊື່ນີ້" ໃນລະຫວ່າງທາງພິກຂຸຜູ້ຮັບຝາກໄດ້ຮູ້ຂ່າວວ່າ "ຜູ້ຮັບມໍຣະນະພາບສາແລ້ວ" ຈຶ່ງອະທິຖານເປັນຈີວອນມໍລະດົກຂອງພິກຂຸຜູ້ຮັບນັ້ນ ແບບນີ້ຊື່ວ່າອະທິຖານບໍ່ຖືກຕ້ອງ ແຕ່ຖືເອົາຍ້ອນວິສາສະກັບຜູ້ຝາກຊື່ວ່າຖືເອົາຖືກຕ້ອງ

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຝາກຈີວອນໄປກັບພິກຂຸດ້ວຍສັ່ງວ່າ "ທ່ານຈົ່ງຖວາຍຈີວອນ ຜືນນີ້ແກ່ພິກຂຸຊື່ນີ້" ໃນລະຫວ່າງທາງ ພິກຂຸຜູ້ຮັບຝາກໄດ້ຮູ້ຂ່າວວ່າ "ຜູ້ຝາກແລະຜູ້ຮັບທັງ ໒ ມໍຣະນະພາບສາແລ້ວ" ຈຶ່ງອະທິຖານເປັນຈີວອນມໍລະດົກຂອງພິກຂຸຜູ້ຝາກ ແບບນີ້ຊື່ວ່າອະທິຖານຖືກຕ້ອງ ອະທິຖານເປັນຈີວອນມໍລະດົກຂອງພິກຂຸຜູ້ຮັບຊື່ວ່າອະທິຖານບໍ່ຖືກຕ້ອງ

## ກໍລະນີທີ ໒ ຝາກໄປດ້ວຍກ່າວວ່າ "ຂ້ານ້ອຍຂໍຖວາຍຯລຯ"

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຝາກຈີວອນໄປກັບພິກຂຸດ້ວຍກ່າວວ່າ "ຂ້ານ້ອຍຂໍຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້" ໃນລະຫວ່າງທາງ ພິກຂຸຜູ້ຮັບຝາກຖືເອົາເອງຍ້ອນວິສາສະກັບຜູ້ຝາກ ແບບນີ້ຊື່ວ່າຖືເອົາບໍ່ຖືກຕ້ອງ ແຕ່ຖືເອົາຍ້ອນວິສາສະກັບຜູ້ຮັບຊື່ວ່າຖືເອົາຖືກຕ້ອງ

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຝາກຈີວອນໄປກັບພິກຂຸດ້ວຍກ່າວວ່າ "ຂ້ານ້ອຍຂໍຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້" ໃນລະຫວ່າງທາງ ພິກຂຸຜູ້ຮັບຝາກຖືເອົາເອງຍ້ອນວິສາສະກັບຜູ້ຮັບ ແບບນີ້ຊື່ວ່າຖືເອົາຖືກຕ້ອງ ແຕ່ຖືເອົາຍ້ອນວິສາສະກັບຜູ້ຝາກ ຊື່ວ່າຖືເອົາບໍ່ຖືກຕ້ອງ

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຝາກຈີວອນໄປກັບພິກຂຸດ້ວຍກ່າວວ່າ "ຂ້ານ້ອຍຂໍຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້" ໃນລະຫວ່າງທາງ ພິກຂຸຜູ້ຮັບຝາກໄດ້ຮູ້ຂ່າວວ່າ "ຜູ້ຝາກມໍຣະນະພາບສາແລ້ວ" ຈຶ່ງອະທິຖານເປັນຈີວອນມໍລະດົກຂອງພິກຂຸຜູ້ຝາກນັ້ນ ແບບນີ້ຊື່ວ່າອະທິຖານບໍ່ຖືກຕ້ອງ ແຕ່ຖືເອົາເອງຍ້ອນວິສາສະກັບຜູ້ຮັບຊື່ວ່າຖືເອົາຖືກຕ້ອງ

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຝາກຈີວອນໄປກັບພິກຂຸດ້ວຍກ່າວວ່າ "ຂ້ານ້ອຍຂໍຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້" ໃນລະຫວ່າງທາງ ພິກຂຸຜູ້ຮັບຝາກໄດ້ຮູ້ຂ່າວວ່າ "ຜູ້ຮັບມໍຣະນະພາບສາແລ້ວ" ຈຶ່ງອະທິຖານເປັນຈີວອນມໍລະດົກຂອງພິກຂຸຜູ້ຮັບນັ້ນ ແນວນີ້ຊື່ວ່າ ອະທິຖານຖືກຕ້ອງ ແຕ່ຖືເອົາຍ້ອນວິສາສະກັບຜູ້ຝາກຊື່ວ່າຖືເອົາບໍ່ຖືກຕ້ອງ

ພິກຂຸທັງຫຼາຍ ໃນກໍລະນີນີ້ ພິກຂຸຝາກຈີວອນໄປກັບພິກຂຸດ້ວຍກ່າວວ່າ "ທ່ານຈົ່ງຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້" ໃນລະຫວ່າງທາງ ພິກຂຸຜູ້ຮັບຝາກໄດ້ຮູ້ຂ່າວວ່າ "ຜູ້ຝາກແລະຜູ້ຮັບທັງ ໒ ມໍຣະນະພາບສາແລ້ວ" ຈຶ່ງອະທິຖານເປັນຈີວອນມໍລະດົກຂອງພິກຂຸຜູ້ຝາກ ແນວນີ້ຊື່ວ່າອະທິຖານບໍ່ຖືກຕ້ອງ ອະທິຖານເປັນຈີວອນມໍລະດົກຂອງພິກຂຸຜູ້ຮັບຊື່ວ່າອະທິຖານຖືກຕ້ອງ

## ໔໓໒. ອັດຖະຈີວະຣະມາຕິກາ

### ວ່າດ້ວຍຈີວອນທີ່ເກີດຂຶ້ນມີ ໘ ມາຕິກາ

### ເລື້ອງມາຕິກາແຫ່ງຈີວອນ ໘ ຂໍ້

[໓໗໙] ພິກຂຸທັງຫຼາຍ ມາຕິກາເພື່ອຄວາມເກີດຂຶ້ນແຫ່ງຈີວອນ ມີ ໘ ແນວນີ້ ຄື

໑. ຖວາຍແກ່ສີມາ
໒. ຖວາຍຕາມກະຕິກາ
໓. ຖວາຍໃນບ່ອນຈັດພິກສາຫານ
໔. ຖວາຍແກ່ສົງ
໕. ຖວາຍແກ່ສົງທັງ ໒ ຝ່າຍ
໖. ຖວາຍແກ່ສົງຜູ້ຈຳພັນສາແລ້ວ (ຄືພິກຂຸສົງແລະພິກຂຸນີສົງ)
໗. ຖວາຍເຈາະຈົງ
໘. ຖວາຍແກ່ບຸກຄົນ

ທີ່ຊື່ວ່າ ຖວາຍແກ່ສີມາ ໄດ້ແກ່ ພິກຂຸທີ່ຢູ່ໃນສີມາມີຈຳນວນທໍ່ໃດ ພິກຂຸເຫຼົ່ານັ້ນ ເພິ່ງແບ່ງກັນ

ທີ່ຊື່ວ່າ ຖວາຍຕາມກະຕິກາ ໄດ້ແກ່ ອາວາດຈຳນວນຫຼາຍ ມີລາບສະເໝີກັນ ຄື ເມື່ອທາຍົກຖວາຍໃນວັດໜຶ່ງຊື່ວ່າເປັນອັນຖວາຍທຸກວັດ

ທີ່ຊື່ວ່າ ຖວາຍໃນບ່ອນຈັດພິກສາຫານ ໄດ້ແກ່ ທາຍົກເຮັດສັກກາຣະເປັນປະຈຳແກ່ສົງໃນບ່ອນໃດ ຖວາຍໃນບ່ອນນັ້ນ

ທີ່ຊື່ວ່າ ຖວາຍແກ່ສົງ ໄດ້ແກ່ ສົງຢູ່ພ້ອມໜ້າກັນແບ່ງ

ທີ່ຊື່ວ່າ ຖວາຍແກ່ສົງ ໔ ຝ່າຍ ໄດ້ແກ່ ພິກຂຸແມ່ນຈະມີຢູ່ເປັນຈຳນວນຫຼາຍ ແຕ່ມີພິກຂຸນີຢູ່ອົງດຽວ ເພິ່ງໃຫ້ຝ່າຍລະເຄິ່ງ ພິກຂຸນີແມ່ນຈະມີຢູ່ເປັນຈຳນວນຫຼາຍ ແຕ່ມີພິກຂຸຢູ່ອົງດຽວ ເພິ່ງໃຫ້ຝ່າຍລະເຄິ່ງ

ທີ່ຊື່ວ່າ ຖວາຍແກ່ສົງຜູ້ຈຳພັນສາແລ້ວ ໄດ້ແກ່ ພິກຂຸມີຈຳນວນທໍ່ໃດຢູ່ຈຳພັນສາ ແລ້ວໃນອາວາດນັ້ນ ພິກຂຸເຫຼົ່ານັ້ນເພິ່ງແບ່ງກັນ

ທີ່ຊື່ວ່າ ຖວາຍເຈາະຈົງ ໄດ້ແກ່ ຖວາຍສະເພາະເຂົ້າຕົ້ມ ພັດຕາຫານ ຂອງຫຍໍ້າ ຈີວອນເສນາສະນະ ຫຼືເພສັດ

ທີ່ຊື່ວ່າ ຖວາຍແກ່ບຸກຄົນ ໄດ້ແກ່ ຖວາຍດ້ວຍກ່າວວ່າ "ເຮົາຖວາຍຈີວອນຜືນນີ້ແກ່ພິກຂຸຊື່ນີ້"

**ຈີວອນຂັນທະກະທີ ໗ ຈົບ**

## ໔໓໓. ລວມເລື້ອງທີ່ມີໃນຈີວອນຂັນທະກະ

### ຈີວອນຂັນທະກະມີ ໙໖ ເລື້ອງ ຄື

ເລື້ອງຄະນະກຸດຸມພີຊາວນະຄອນຣາດຊະຄຶພົບຍິງງາມເມືອງຊື່ອຳພະປາລີໃນນະຄອນເວສາລີກັບມາເມືອງຣາດຊະຄຶແລ້ວ ຂາບທູນເລື້ອງນັ້ນໃຫ້ພຣະຣາຊາຊົງຮັບຮູ້

ເລື້ອງບຸດຂອງຍິງງາມເມືອງຊື່ສາລະວະດີ ເຊິ່ງຕໍ່ມາເປັນໂອຣົດຂອງເຈົ້າຊາຍອະໄພ ຍ້ອນເຫດທີ່ຍັງມີຊີວິດ ເຈົ້າຊາຍຈຶ່ງປະທານຊື່ວ່າຊີວົກ

ເລື້ອງຊີວົກເດີນທາງໄປນະຄອນຕັກກະສິລາ ຮຽນວິຊາແພດສຳເລັດ
ເປັນໝໍໃຫຍ່ໄດ້ປິ່ນປົວພະຍາດປວດຫົວຂອງພັນລະຍາເສດຖີທີ່ເປັນ
ຊຳເຮື້ອຢູ່ ໗ ປີ ຈົນຫາຍດ້ວຍການນັດຢາພຽງເທື່ອດຽວ
ເລື້ອງປົວພະຍາດຣິດສີດວງທະວານຂອງພຣະເຈົ້າພິມພິສານຈອມທັບມະຄົດຣັດ
ເລື້ອງພຣະຣາດຊະທານຕຳແໜ່ງໝໍຊີວົກເປັນໝໍຫຼວງປະຈຳພຣະອົງ ພຣະສະໜົມນາງກຳນັນແລະອຸປັດຖາກພຣະພຸດທະເຈົ້າແລະພຣະສົງ

ເລື້ອງຮັກສາເສດຖີຊາວນະຄອນຣາດຊະຄຶຜູ້ປ່ວຍເປັນພະຍາດປວດຫົວ
ເລື້ອງປິ່ນປົວພະຍາດຊື້ນບິ່ງໃນລຳໄສ້
ເລື້ອງປິ່ນປົວພະຍາດຈ່ອຍເຫຼືອງຂອງພຣະເຈົ້າປັດໂຊດຫາຍດ້ວຍໃຫ້ສະເຫວີຍພຣະໂອສົດປະສົມເນີຍໃສ
ເລື້ອງໄດ້ຮັບພຣະຣາດຊະທານຜ້າຄູ່ສີໄວຍະກະເປັນລາງວັນ

ເລື້ອງສົງພຣະກາຍຂອງພຣະຜູ້ມີພຣະພາກເຈົ້າເຊິ່ງໜັກໜົມດ້ວຍສິ່ງເປັນໂທດໄດ້ຊຸ່ມຊື່ນ
ເລື້ອງໝໍຊີວົກທູນຖວາຍພຣະໂອສົດ ໓໐ ຄັ້ງ ໂດຍອົບກ້ານອຸບົນ ໓ ກ້ານດ້ວຍຢາ
ເລື້ອງໝໍຊີວົກຂາບທູນຂໍພອນ ເມື່ອພຣະຜູ້ມີພຣະພາກເຈົ້າຊົງມີພຣະກາຍເປັນປົກກະຕິແລ້ວ ເລື້ອງຊົງຮັບຜ້າຄູ່ສີໄວຍະກະ
ເລື້ອງຊົງອະນຸຍາດຄະຫະບໍດີຈີວອນ

ເລື້ອງຈີວອນເກີດຂຶ້ນຫຼາຍໃນນະຄອນຣາດຊະຄຶ
ເລື້ອງຊົງອະນຸຍາດຜ້າປາວານຜ້າໄໝແລະຜ້າໂກເຊົາ
ເລື້ອງຜ້າກຳພົນລາຄາເຄິ່ງກາສີຍະ
ເລື້ອງຜ້າເນື້ອດີເນື້ອຫຍາບ ພຣະຜູ້ມີພຣະພາກເຈົ້າຊົງສັນເສີນຄວາມສັນໂດດ
ເລື້ອງພິກຂຸຖ້າກັນແລະບໍ່ຖ້າກັນ
ເລື້ອງທາຍົກນຳຈີວອນກັບຄືນ

ເລື້ອງສົມມຸດເຮືອນຄັງ
ເລື້ອງເຈົ້າໜ້າທີ່ຮັກສາຜ້າໃນເຮືອນຄັງ
ເລື້ອງຊົງຫ້າມຍ້າຍເຈົ້າໜ້າທີ່ເຮືອນຄັງ
ເລື້ອງຈີວອນເກີດຂຶ້ນຫຼາຍ
ເລື້ອງສິ່ງສຽງດັງຂະນະແຈກຈີວອນ
ເລື້ອງວິທີແຈກຈີວອນ
ເລື້ອງວິທີໃຫ້ສ່ວນແບ່ງ

ເລື້ອງໃຫ້ແລກສ່ວນຂອງຕົນ
ເລື້ອງໃຫ້ສ່ວນພິເສດ
ເລື້ອງວິທີໃຫ້ສ່ວນຈີວອນ
ເລື້ອງຍ້ອມຈີວອນດ້ວຍມູນງົວ
ເລື້ອງຍ້ອມດ້ວຍນ້ຳເຢັ
ເລື້ອງນ້ຳຍ້ອມລົ້ນ
ເລື້ອງບໍ່ຮູ້ວ່ານ້ຳຍ້ອມເດືອດແລ້ວບໍຍັງບໍ່ເດືອດ
ເລື້ອງຍົກໝໍ້ນ້ຳຍ້ອມລົງ
ເລື້ອງບໍ່ມີພາຊະນະສຳລັບຍ້ອມ
ເລື້ອງຍ່ອງຈີວອນໃນຖາດ

ເລື້ອງຕາກຈີວອນເທິງພື້ນ
ເລື້ອງປວກກັດເຄື່ອງ
ຮອງເຮັດດ້ວຍຫຍ້າ
ເລື້ອງແຂວນຈີວອນພັບກາງ
ເລື້ອງຊາຍຈີວອນຂາດ
ເລື້ອງນ້ຳຍ້ອມຍ້ອຍອອກຈາກຊາຍຂ້າງດຽວ

ເລື້ອງຈີວອນແຂງ
ເລື້ອງຈີວອນຫຍາບກະດ້າງ
ເລື້ອງພຣະສັບພັກຄີໃຊ້ຈີວອນທີ່ບໍ່ໄດ້ຕັດ
ເລື້ອງຕັດຈີວອນຕາມແບບຄັນນາ
ເລື້ອງທອດພຣະເນດເຫັນພິກຂຸແບກຫໍ່ຈີວອນ
ເລື້ອງຊົງອະນຸຍາດໄຕຣຈີວອນ

ເລື້ອງພຣະສັບພັກຄີຊົງອະຕິເຣກຈີວອນຊຸດອື່ນເຂົ້າບ້ານ
ເລື້ອງອະຕິເຣກຈີວອນເກີດຂຶ້ນ
ເລື້ອງຊົງອະນຸຍາດຜ້າຕາບເມື່ອອັນຕະຣະວາສົກຂາດຊອດ
ເລື້ອງຝົນຕົກພ້ອມກັນ ໔ ທະວີບ
ເລື້ອງນາງວິສາຂາຂໍພອນເພື່ອຖວາຍຜ້າອາບນ້ຳຝົນ ອາຄັນຕຸກະພັດ ຄະມິກະພັດ ຄິລານະພັດ ຄິລານຸປັດຖາກະພັດ ເພສັດ ທຸວະຍາຄູ ແລະຖວາຍຜ້າອາບນ້ຳແກ່ພິກຂຸນີສົງ

ເລື້ອງພິກຂຸນອນຫຼັບຂາດສະຕິສຳປະຊັນຍະຍ້ອນສັນໂພຊະນະອັນປະນີດ
ເລື້ອງຜ້າປູນັ່ງຜືນນ້ອຍເກີນໄປ
ເລື້ອງຝີດາດ
ເລື້ອງຊົງອະນຸຍາດຜ້າເຊັດປາກ
ເລື້ອງຊົງອະນຸຍາດໃຫ້ຖືວິສາສະຜ້າເປືອກໄມ້
ເລື້ອງໄຕຣຈີວອນບໍລິບູນ
ເລື້ອງອະທິຖານ
ເລື້ອງຈີວອນມີຂະໜາດພຽງໃດຈຶ່ງຕ້ອງວິກັບ
ເລື້ອງອຸດຕະຣາສົງທີ່ເຮັດເປັນຜ້າບັງສຸກຸນໜັກ
ເລື້ອງຊາຍສັງຄາຕິບໍ່ສະເໝີກັນ

ເລື້ອງດ້າຍຂາດ
ເລື້ອງແຜ່ນສັງຄາຕິລຸ່ຍອອກ
ເລື້ອງຜ້າບໍ່ພໍ
ເລື້ອງຜ້າຕໍ່ຂ້າງ
ເລື້ອງຈີວອນເກີດຂຶ້ນຫຼາຍ
ເລື້ອງມ້ຽນຈີວອນໄວ້ໃນວິຫານອັນທະວັນ
ເລື້ອງທ່ານພຣະອານົນເຜີສະຕິ
ເລື້ອງພິກຂຸອົງດຽວຈຳພັນສາ
ເລື້ອງພິກຂຸຢູ່ອົງດຽວຕະຫຼອດລະດູ

ເລື້ອງພຣະເຖຣະສອງອ້າຍນ້ອງ
ເລື້ອງພິກຂຸ ໓ ອົງຈຳພັນສາໃນນະຄອນຣາດຊະຄືຣ
ເລື້ອງພຣະອຸປະນັນທະຈຳພັນສາແລ້ວໄປອາວາດໃກ້ບ້ານ
ເລື້ອງພຣະອຸປະນັນທະຈຳພັນສາໃນອາວາດ ໔ ແຫ່ງ
ເລື້ອງພິກຂຸອາພາດເປັນພະຍາດຖອກທ້ອງ
ເລື້ອງຄົນໄຂ້ທີ່ປິ່ນປົວໄດ້ງ່າຍແລະປິ່ນປົວໄດ້ຍາກ
ເລື້ອງພິກຂຸແລະສາມະເນນເປັນໄຂ້

ເລື້ອງພິກຂຸເປືອຍກາຍ
ເລື້ອງພິກຂຸນຸ່ງຜ້າຄາກອງ ຜ້າເປືອກໄມ້ ຜ້າໝາກໄມ້ ຜ້າທໍດ້ວຍຜົມຄົນ ຜ້າທໍດ້ວຍຂົນສັດ ຜ້າທໍດ້ວຍປີກນົກເຄົ້າໜັງເສືອ

ເລື້ອງພິກຂຸນຸ່ງຜ້າເຮັດດ້ວຍກ້ານດອກຮັກ ຜ້າເປືອກປໍ
ເລື້ອງພຣະສັບພັກຄີທີ່ມຈີວອນສີຂຽວທີ່ມຈີວອນສີເຫຼືອງ ທີ່ມຈີວອນສີແດງ ທີ່ມຈີວອນສີບານເຢັນ ທີ່ມຈີວອນສີດຳ ທີ່ມຈີວອນສີແສດ ທີ່ມຈີວອນສີຊົມພູ ທີ່ມຈີວອນບໍ່ຕັດຊາຍ ທີ່ມຈີວອນຊາຍຍາວ ທີ່ມຈີວອນມີຊາຍລາຍດອກໄມ້ ທີ່ມຈີວອນຊາຍເປັນແຜ່ນໃສ່ເສື້ອ ໃສ່ໝວກ ໂພກຜ້າ

ເລື້ອງຈີວອນຍັງບໍ່ເກີດຂຶ້ນພິກຂຸຫຼີກໄປ ເລື້ອງສົງແຕກກັນ
ເລື້ອງທາຍົກຖວາຍນ້ຳແກ່ສົງຝ່າຍໜຶ່ງ ຖວາຍຈີວອນແກ່ສົງອີກຝ່າຍໜຶ່ງ
ເລື້ອງພຣະເຣວະຕະຝາກຈີວອນ ເລື້ອງການຖືເອົາຂອງຝາກໂດຍຖືວິສາສະ ແລະການອະທິຖານເປັນຈີວອນມໍລະດົກ ເລື້ອງມາຕິກາຂອງຈີວອນ ๗ ຂໍ້

**ຈີວອນຂັນທະກະ ຈົບ**

# ៧. ຈຳເປີຍຍະຂັນທະກະ

## ໔໓໔. ກັດສະປະໂຄດຕະພິກຂຸວັດຖຸ

### ວ່າດ້ວຍພຣະກັດສະປະໂຄດ

### ເລື້ອງພຣະກັດສະປະໂຄດຜູ້ຢູ່ປະຈຳໃນອາວາດວາສະພະຄາມ

[໓໗໐] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຝັ່ງສະໂບກຂະຣະນີຊື່ຄັກຄະຣາ ເຂດ ນະຄອນຈຳປາ ຄັ້ງນັ້ນ ໃນແຄວັ້ນກາສີ ມີໝູ່ບ້ານຊື່ວາສະພະຄາມ ພິກຂຸຊື່ກັດສະປະໂຄດ ຢູ່ປະຈຳ ໃນອາວາດໃນບ່ອນນັ້ນ ຝັກໃຝ່ກັງວົນຢູ່ ຂົນຂວາຍຢູ່ວ່າ "ດ້ວຍວິທີໃດນໍ ພິກຂຸຜູ້ມີສິນດີງາມ ທີ່ຍັງບໍ່ມາເພິ່ງມາ ແລະພິກຂຸຜູ້ມີສິນດີງາມທີ່ມາແລ້ວເພິ່ງຢູ່ເປັນຜາສຸກ ແລະອາວາດນີ້ຈະຈະເລີນ ງອກງາມໄພບູນໄດ້"

ສະໄໝນັ້ນ ພິກຂຸຈຳນວນຫຼາຍອົງທ່ຽວຈາຣິກໄປໃນແຄວັ້ນກາສີ ຈົນເຖິງວາສະພະຄາມ ພິກຂຸ ກັດສະປະໂຄດໄດ້ເຫັນພິກຂຸເຫຼົ່ານັ້ນຍ່າງມາແຕ່ໄກ ຈຶ່ງປູອາສະນະ ຕັ້ງນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລຸກໄປຮັບບາດແລະຈີວອນ ຕ້ອນຮັບດ້ວຍນ້ຳດື່ມ ຈັດແຈງນ້ຳອາບ ແມ່ນເຂົ້າຕົ້ມ ຂອງຫຍ້ຳ ພັດຕາຫານກໍຈັດແຈງໃຫ້

ຄັ້ງນັ້ນ ພິກຂຸອາຄັນຕຸກະເຫຼົ່ານັ້ນໄດ້ເປີກສາກັນດັ່ງນີ້ວ່າ "ທ່ານທັງຫຼາຍ ພິກຂຸຢູ່ປະຈຳໃນອາວາດອົງນີ້ດີແທ້ ໄດ້ຈັດແຈງນ້ຳອາບ ແມ່ນເຂົ້າຕົ້ມ ຂອງຫຍ້ຳ ພັດຕາຫານ ກໍຈັດແຈງໃຫ້ ຖ້າຈັ່ງຊັ້ນແລ້ວພວກເຮົາພັກຢູ່ໃນວາສະພະຄາມນີ້ແລ" ພິກຂຸອາຄັນຕຸກະເຫຼົ່ານັ້ນໄດ້ພັກຢູ່ໃນວາສະພະຄາມນັ້ນເອງ

ຕໍ່ມາ ພິກຂຸກັດສະປະໂຄດໄດ້ມີຄວາມຄິດດັ່ງນີ້ວ່າ "ພິກຂຸອາຄັນຕຸກະເຫຼົ່ານີ້ບໍ່ຕ້ອງລຳບາກໃນຖານະທີ່ເປັນພຣະອາຄັນຕຸກະ ເວລານີ້ພິກຂຸອາຄັນຕຸກະເຫຼົ່ານີ້ທີ່ບໍ່ຊ່ຽວຊານທາງໂຄຈອນ[១] ກໍຊ່ຽວຊານແລ້ວ ການກະທຳຄວາມຈັດແຈງໃນຕະກູນຄົນອື່ນຈົນຕະຫຼອດຊີວິດເຮັດໄດ້ຍາກ ອັນໜຶ່ງ ການອອກປາກຂໍຍ່ອມບໍ່ເປັນທີ່ພໍໃຈຂອງຄົນທັງຫຼາຍ ຢ່າຈັ່ງຊັ້ນເລີຍ ເຮົາບໍ່ເພິ່ງຈັດແຈງ ເຂົ້າຕົ້ມຂອງຫຍ້ຳພັດຕາຫານ" ແລ້ວເຊົາຈັດແຈງເຂົ້າຕົ້ມຂອງຫຍ້ຳພັດຕາຫານ

ລຳດັບນັ້ນ ພິກຂຸອາຄັນຕຸກະເຫຼົ່ານັ້ນເປີກສາກັນວ່າ "ທ່ານທັງຫຼາຍ ແຕ່ກ່ອນນີ້ ພິກຂຸທີ່ຢູ່ປະຈຳໃນອາວາດອົງນີ້ຈັດແຈງນ້ຳອາບ ແມ່ນເຂົ້າຕົ້ມຂອງຫຍ້ຳພັດຕາຫານກໍຈັດແຈງໃຫ້ ເວລານີ້ພິກຂຸທີ່ຢູ່ປະຈຳໃນອາວາດອົງນີ້ບໍ່ຈັດແຈງເຂົ້າຕົ້ມຂອງຫຍ້ຳພັດຕາຫານແລ້ວ ທ່ານ ທັງຫຼາຍ ບັດນີ້ພິກຂຸທີ່ຢູ່ປະຈຳໃນອາວາດອົງນີ້ບໍ່ດີສາແລ້ວ ຖ້າຈັ່ງຊັ້ນແລ້ວພວກເຮົາຈົ່ງລົງອຸກເຂປະນີຍະກຳ

ພິກຂຸທີ່ຢູ່ປະຈຳໃນອາວາດອົງນີ້ອອກໄປ" ຄັ້ງນັ້ນ ພິກຂຸອາຄັນຕຸກະ ເຫຼົ່ານັ້ນ ປະຊຸມກັນ ໄດ້ກ່າວກະພິກຂຸກັດສະປະໂຄດນັ້ນດັ່ງນີ້ວ່າ "ທ່ານ ແຕ່ກ່ອນ ທ່ານຈັດແຈງນ້ຳອາບ ແມ່ນເຂົ້າຕົ້ມຂອງຫຍ້ຳພັດຕາຫານກໍຈັດໃຫ້ ເວລານີ້ບໍ່ຈັດແຈງເຂົ້າຕົ້ມຂອງຫຍ້ຳພັດຕາຫານ ສາແລ້ວ ທ່ານຕ້ອງອາບັດແລ້ວ ທ່ານເຫັນອາບັດນັ້ນບໍ"

ພິກຂຸກັດສະປະໂຄດກ່າວວ່າ "ທ່ານທັງຫຼາຍ ຂ້ານ້ອຍບໍ່ມີອາບັດທີ່ເພິ່ງເຫັນ"

ຄັ້ງນັ້ນ ພວກພິກຂຸອາຄັນຕຸກະໄດ້ລົງອຸກເຂປະນີຍະກຳພິກຂຸກັດສະປະໂຄດ ຍ້ອນການບໍ່ເຫັນວ່າເປັນອາບັດ

ລຳດັບນັ້ນ ພິກຂຸກັດສະປະໂຄດໄດ້ມີຄວາມຄິດດັ່ງນີ້ວ່າ "ເຮົາບໍ່ຮູ້ເລື້ອງນີ້ວ່າ ນັ້ນເປັນອາບັດ ບໍ່ເປັນອາບັດ ເຮົາຕ້ອງອາບັດບໍ່ຕ້ອງອາບັດ ເຮົາຖືກລົງອຸກເຂປະນີຍະກຳ ບໍ່ຖືກລົງອຸກເຂປະນີຍະກຳ ດ້ວຍກຳທີ່ຊອບທຳບໍ່ຊອບທຳ ຖືກຕ້ອງບໍ່ຖືກຕ້ອງ ຄວນແກ່ເຫດບໍ່ຄວນແກ່ເຫດ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງເດີນທາງໄປນະຄອນຈຳປາ ແລ້ວຂາບທູນຖາມພຣະຜູ້ມີພຣະພາກເຈົ້າກ່ຽວກັບເລື້ອງນັ້ນ"

ຄັ້ງນັ້ນ ພິກຂຸກັດສະປະໂຄດເກັບເສນາສະນະຖືບາດແລະຈີວອນ ເດີນທາງໄປນະຄອນຈຳປາ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງລົງ ທີ່ສົມຄວນ

## ພຸດທະປະເພນີ

ການທີ່ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍຊົງປາໄສກັບພິກຂຸອາຄັນຕຸກະທັງຫຼາຍ ນັ້ນເປັນພຸດທະປະເພນີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸກັດສະປະໂຄດດັ່ງນີ້ວ່າ "ພິກຂຸ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ທ່ານເດີນທາງໄກມາບໍ່ລຳບາກບໍ ທ່ານມາຈາກໃສ"

ພິກຂຸກັດສະປະໂຄດຂາບທູນວ່າ "ຍັງສະບາຍດີ ຂ້ານ້ອຍ ຍັງພໍເປັນຢູ່ໄດ້ ຂ້ານ້ອຍ ແລະຂ້າ ພຣະອົງເດີນທາງໄກມາບໍ່ລຳບາກ ຂ້ານ້ອຍ ໃນຊົນນະບົດ ແຄວັນກາສີມີໝູ່ບ້ານຊື່ວາສະພະ ຂ້າພຣະອົງຢູ່ປະຈຳໃນອາວາດໃນບ່ອນນັ້ນ ຝັກໃຝ່ໃນການກໍ່ສ້າງ ຂົນຂວາຍຢູ່ວ່າ ດ້ວຍວິທີໃດນໍ ພິກຂຸຜູ້ມີສີນດີງາມທີ່ຍັງບໍ່ມາເພິ່ງມາ ແລະ ພິກຂຸຜູ້ມີສີນດີງາມທີ່ມາແລ້ວເພິ່ງຢູ່ເປັນຜາສຸກ ແລະອາວາດນີ້ຈະຈະເລີນງອກງາມໄພບູນໄດ້

ຂ້າແຕ່ ພຣະອົງຜູ້ຈະເລີນ ຕໍ່ມາ ພິກຂຸຈຳນວນຫຼາຍອົງທ່ຽວຈາຣິກໄປໃນແຄວ້ນກາສີ ຈົນເຖິງ ວາສະພະຄາມ ຂ້າພຣະອົງໄດ້ເຫັນພິກຂຸເຫຼົ່ານັ້ນຍ່າງມາແຕ່ໄກ ຈຶ່ງປູອາສະນະ ຕັ້ງນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລຸກໄປຮັບບາດແລະຈີວອນ ຕ້ອນຮັບດ້ວຍນ້ຳດື່ມ ຈັດແຈງນ້ຳອາບ ແມ່ນເຂົ້າຕົ້ມຂອງຫຍ້ຳພັດຕາຫານກໍຈັດແຈງໃຫ້

ຂ້າແຕ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນ ພິກຂຸອາຄັນຕຸກະເຫຼົ່ານັ້ນໄດ້ເປີກສາກັນດັ່ງນີ້ວ່າ ທ່ານທັງຫຼາຍ ພິກຂຸທີ່ຢູ່ປະຈຳໃນອາວາດອົງນີ້ດີແທ້ ໄດ້ຈັດແຈງນ້ຳອາບ ແມ່ນເຂົ້າຕົ້ມຂອງຫຍ້ຳພັດຕາຫານກໍຈັດແຈງໃຫ້ ຖ້າຈັ່ງຊັ້ນແລ້ວພວກເຮົາພັກຢູ່ໃນວາສະພະຄາມນີ້ແລ ພິກຂຸອາຄັນຕຸກະ ເຫຼົ່ານັ້ນໄດ້ພັກຢູ່ໃນວາສະພະຄາມນັ້ນເອງ

ຂ້າແຕ່ ພຣະອົງຜູ້ຈະເລີນ ຕໍ່ມາ ຂ້າພຣະອົງໄດ້ມີຄວາມຄິດດັ່ງນີ້ວ່າ ພິກຂຸອາຄັນຕຸກະເຫຼົ່ານີ້ບໍ່ຕ້ອງລຳບາກໃນຖານະທີ່ເປັນພຣະອາຄັນຕຸກະເວລານີ້ພິກຂຸອາຄັນຕຸກະເຫຼົ່ານີ້ທີ່ບໍ່ຊ່ຽວຊານທາງໂຄຈອນກໍຊ່ຽວຊານແລ້ວ ການກະທຳຄວາມຈັດແຈງໃນຕະກູນຄົນອື່ນຈົນຕະຫຼອດຊີວິດເຮັດໄດ້ຍາກ ອັນໜຶ່ງ ການອອກປາກຂໍຍ່ອມບໍ່ເປັນທີ່ພໍໃຈຂອງຄົນທັງຫຼາຍ ຢ່າຈັ່ງຊັ້ນເລີຍ ເຮົາບໍ່ເພິ່ງຈັດແຈງເຂົ້າຕົ້ມຂອງຫຍ້ຳພັດຕາຫານ ແລ້ວເຊົາຈັດແຈງເຂົ້າຕົ້ມຂອງຫຍ້ຳພັດຕາຫານ

ຂ້າແຕ່ ພຣະອົງຜູ້ຈະເລີນ ລຳດັບນັ້ນ ພິກຂຸອາຄັນຕຸກະເຫຼົ່ານັ້ນເປີກສາກັນວ່າ “ທ່ານທັງຫຼາຍ ແຕ່ກ່ອນນີ້ ພິກຂຸທີ່ຢູ່ປະຈຳໃນອາວາດອົງນີ້ຈັດແຈງນ້ຳອາບ ແມ່ນເຂົ້າຕົ້ມຂອງຫຍ້ຳພັດຕາຫານກໍຈັດແຈງໃຫ້ ເວລານີ້ ພິກຂຸທີ່ຢູ່ປະຈຳໃນອາວາດອົງນີ້ບໍ່ຈັດແຈງເຂົ້າຕົ້ມ ຂອງຫຍ້ຳພັດຕາຫານແລ້ວ ທ່ານທັງຫຼາຍ ບັດນີ້ ພິກຂຸທີ່ຢູ່ປະຈຳໃນອາວາດອົງນີ້ ບໍ່ດີສາແລ້ວ ຖ້າຈັ່ງຊັ້ນແລ້ວ ພວກເຮົາຈົ່ງລົງອຸກເຂປະນີຍະກຳພິກຂຸທີ່ຢູ່ປະຈຳໃນອາວາດອົງນີ້ອອກໄປ”

ຂ້າແຕ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນ ພິກຂຸອາຄັນຕຸກະເຫຼົ່ານັ້ນປະຊຸມກັນ ໄດ້ກ່າວກັບຂ້າພຣະອົງດັ່ງນີ້ວ່າ “ທ່ານ ແຕ່ກ່ອນທ່ານຈັດແຈງນ້ຳອາບ ແມ່ນເຂົ້າຕົ້ມ ຂອງຫຍ້ຳ ພັດຕາຫານ ກໍຈັດແຈງໃຫ້ ເວລານີ້ບໍ່ຈັດແຈງເຂົ້າຕົ້ມຂອງຫຍ້ຳພັດຕາຫານສາແລ້ວ ທ່ານຕ້ອງອາບັດແລ້ວ ທ່ານເຫັນອາບັດນັ້ນບໍ”

ຂ້າພຣະອົງກ່າວວ່າ “ທ່ານທັງຫຼາຍ ຂ້ານ້ອຍບໍ່ມີອາບັດທີ່ເພິ່ງເຫັນ”

ຂ້າແຕ່ ພຣະອົງຜູ້ຈະເລີນ ຄັ້ງນັ້ນ ພວກພິກຂຸອາຄັນຕຸກະໄດ້ລົງອຸກເຂປະນີຍະກຳຂ້າພຣະອົງຍ້ອນການບໍ່ເຫັນວ່າເປັນອາບັດ

ຂ້າພຣະອົງໄດ້ມີຄວາມຄິດດັ່ງນີ້ວ່າ ເຮົາບໍ່ຮູ້ເລື້ອງນີ້ວ່າ ນັ້ນເປັນອາບັດບໍ່ເປັນອາບັດ ເຮົາຕ້ອງອາບັດບໍ່ຕ້ອງອາບັດ ເຮົາຖືກລົງອຸກເຂປະນີຍະກຳບໍ່ຖືກລົງອຸກເຂປະນີຍະກຳ ດ້ວຍກຳທີ່ຊອບທຳບໍ່ຊອບທຳ ຖືກຕ້ອງບໍ່ຖືກຕ້ອງ ຄວນແກ່ເຫດບໍ່ຄວນແກ່ເຫດ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງ

ເດີນທາງໄປນະຄອນຈຳປາແລ້ວຂາບທູນຖາມພຣະຜູ້ມີພຣະພາກເຈົ້າ ກ່ຽວກັບເລື້ອງນັ້ນ ຂ້າພຣະອົງເດີນທາງມາຈາກວາສະພະຄາມນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸ ນັ້ນບໍ່ເປັນອາບັດ ນັ້ນເປັນອາບັດເປັນໄປບໍ່ໄດ້ ທ່ານບໍ່ຕ້ອງອາບັດ ທ່ານຕ້ອງອາບັດເປັນໄປບໍ່ໄດ້ ທ່ານບໍ່ຖືກລົງອຸກເຂປະນີຍະກຳ ທ່ານຖືກລົງອຸກເຂປະນີຍະ ກຳເປັນໄປບໍ່ໄດ້ ທ່ານຖືກລົງອຸກເຂປະນີຍະກຳດ້ວຍກຳທີ່ບໍ່ຖືກຕ້ອງຕາມທຳ ບໍ່ຖືກຕ້ອງ ບໍ່ຄວນແກ່ເຫດ ທ່ານຈົ່ງໄປຢູ່ໃນວາສະພະຄາມນັ້ນແລ"

ພິກຂຸກັດສະປະໂຄດທູນຮັບສະໜອງພຣະພຸດທະດຳຣັດແລ້ວລຸກຈາກອາສະນະ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າ ກະທຳປະທັກຂິນແລ້ວກັບໄປສູ່ວາສະພະຄາມ

[໓໗໑] ຄັ້ງນັ້ນ ພິກຂຸອາຄັນຕຸກະເຫຼົ່ານັ້ນມີຄວາມກັງວົນໃຈ ມີຄວາມເດືອດຮ້ອນໃຈເປີກສາກັນວ່າ "ບໍ່ແມ່ນລາບຂອງພວກເຮົາ ພວກເຮົາບໍ່ມີລາບນໍ ພວກເຮົາໄດ້ຊົ່ວແລ້ວນໍ ພວກເຮົາໄດ້ບໍ່ດີແລ້ວນໍ ທີ່ລົງອຸກເຂປະນີຍະກຳພິກຂຸຜູ້ບໍລິສຸດ ຜູ້ບໍ່ຕ້ອງອາບັດ ຍ້ອນເລື້ອງທີ່ບໍ່ສົມຄວນ ຍ້ອນເຫດບໍ່ສົມຄວນ ຖ້າຈັ່ງຊັ້ນແລ້ວ ພວກເຮົາຈະເດີນທາງໄປນະຄອນຈຳປາແລ້ວ ສະແດງໂທດທີ່ລ່ວງເກີນໂດຍຍອມຮັບຜິດໃນພຸດທະສຳນັກ"

ລຳດັບນັ້ນ ພິກຂຸອາຄັນຕຸກະພວກນັ້ນ ໄດ້ເກັບເສນາສະນະ ຖືບາດແລະຈີວອນເດີນທາງໄປນະຄອນຈຳປາ ເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າຮອດບ່ອນຢູ່ ເມື່ອເຖິງແລ້ວໄດ້ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງທີ່ສົມຄວນ

ການທີ່ພຣະຜູ້ມີພຣະພາກພຸດທະເຈົ້າທັງຫຼາຍຊົງສົນທະນາປາໄສກັບພິກຂຸອາຄັນຕຸກະທັງຫຼາຍ ນັ້ນເປັນພຸດທະປະເພນີ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຕັດຖາມພິກຂຸເຫຼົ່ານັ້ນດັ່ງນີ້ວ່າ "ພິກຂຸທັງຫຼາຍ ພວກທ່ານສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ພວກທ່ານເດີນທາງໄກມາບໍ່ລຳບາກບໍ ພວກທ່ານມາຈາກໃສ"

ພວກພິກຂຸອາຄັນຕຸກະຂາບທູນວ່າ "ສະບາຍດີ ຂ້ານ້ອຍ ຍັງພໍເປັນຢູ່ໄດ້ ຂ້ານ້ອຍ ແລະພວກຂ້າພຣະອົງເດີນທາງໄກມາບໍ່ລຳບາກ ຂ້ານ້ອຍ ໃນຊົນນະບົດແຄວັ້ນກາສີ ມີໝູ່ບ້ານຊື່ວາສະພະຄາມ ພວກຂ້າພຣະອົງເດີນທາງມາຈາກວາສະພະຄາມ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພິກຂຸທັງຫຼາຍ ພວກທ່ານລົງອຸກເຂປະນີຍະກຳພິກຂຸທີ່ຢູ່ປະຈຳໃນອາວາດບໍ"

ພວກພິກຂຸອາຄັນຕຸກະຂາບທູນວ່າ "ແນວນັ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພວກທ່ານລົງອຸກເຂປະນີຍະກຳຍ້ອນເລື້ອງອັນໃດ ຍ້ອນເຫດໃດ"

ພວກພິກຂຸອາຄັນຕຸກະຂາບທູນວ່າ "ຍ້ອນເລື້ອງທີ່ບໍ່ສົມຄວນ ຍ້ອນເຫດບໍ່ສົມຄວນ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ "ໂມຄະບຸຣຸດທັງຫຼາຍ ການກະທຳຂອງພວກທ່ານບໍ່ສົມຄວນ ບໍ່ຄ້ອຍຕາມ ບໍ່ເໝາະສົມ ບໍ່ແມ່ນກິດຂອງສະມະນະ ໃຊ້ບໍ່ໄດ້ ບໍ່ຄວນເຮັດເລີຍ ໂມຄະບຸຣຸດທັງຫຼາຍ ເປັນຫຍັງພວກທ່ານຈຶ່ງໄດ້ລົງອຸກເຂປະນີຍະກຳພິກຂຸຜູ້ບໍລິສຸດ ບໍ່ມີອາບັດ ຍ້ອນເລື້ອງທີ່ບໍ່ສົມຄວນ ຍ້ອນເຫດທີ່ບໍ່ສົມຄວນນໍ ໂມຄະບຸຣຸດທັງຫຼາຍ ການເຮັດແນວນີ້ບໍ່ໄດ້ເປັນໄປເພື່ອຄວາມເຫຼື້ອມໃສຂອງຄົນທີ່ຍັງບໍ່ເຫຼື້ອມໃສ ຯລຯ" ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ສົງບໍ່ເພິ່ງລົງອຸກເຂປະນີຍະກຳພິກຂຸຜູ້ບໍລິສຸດ ບໍ່ມີອາບັດ ຍ້ອນເລື້ອງບໍ່ສົມຄວນ ຍ້ອນເຫດບໍ່ສົມຄວນ ສົງໝູ່ໃດ ລົງອຸກເຂປະນີຍະກຳ ຕ້ອງອາບັດທຸກກົດ"

ລຳດັບນັ້ນ ພິກຂຸເຫຼົ່ານັ້ນໄດ້ລຸກຈາກອາສະນະ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງຊົບຫົວລົງແທບພຣະບາດຂອງພຣະຜູ້ມີພຣະພາກເຈົ້າແລ້ວ ໄດ້ຂາບທູນດັ່ງນີ້ວ່າ "ພຣະອົງຜູ້ຈະເລີນ ຂ້າພຣະອົງທັງຫຼາຍໄດ້ກະທຳຄວາມຜິດຍ້ອນຄວາມໂງ່ຈ້າເບົາປັນຍາ ທີ່ໄດ້ລົງອຸກເຂປະນີຍະກຳພິກຂຸຜູ້ບໍລິສຸດ ບໍ່ມີອາບັດ ຍ້ອນເລື້ອງທີ່ບໍ່ສົມຄວນ ຍ້ອນເຫດບໍ່ສົມຄວນ ຂໍພຣະຜູ້ມີພຣະພາກເຈົ້າຊົງໂຜດຮັບການຂໍຂະມາ ເພື່ອຄວາມສັງລວມຕໍ່ໄປເທີ້ນ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຖ້າຈັ່ງຊັ້ນ ພິກຂຸທັງຫຼາຍ ການທີ່ພວກທ່ານທັງຫຼາຍໄດ້ກະທຳຄວາມຜິດຍ້ອນຄວາມໂງ່ຈ້າເບົາປັນຍາ ທີ່ໄດ້ລົງອຸກເຂປະນີຍະກຳພິກຂຸຜູ້ບໍລິສຸດ ບໍ່ມີອາບັ ດ ຍ້ອນເລື້ອງທີ່ບໍ່ສົມຄວນ ຍ້ອນເຫດບໍ່ສົມຄວນ ພິກຂຸທັງຫຼາຍ ຍ້ອນເຫດທີ່ພວກທ່ານເຫັນຄວາມຜິດເປັນຄວາມຜິດແລ້ວ ແກ້ໄຂໃຫ້ຖືກຕ້ອງ ຂໍ້ນັ້ນເຮົາຍອມຮັບ ພິກຂຸທັງຫຼາຍ ຍ້ອນການທີ່ບຸກຄົນເຫັນຄວາມຜິດເປັນຄວາມຜິດແລ້ວແກ້ໄຂໃຫ້ຖືກຕ້ອງແລະສັງລວມຕໍ່ໄປ ນີ້ເປັນຄວາມຈະເລີນໃນວິໄນຂອງພຣະອະຣິຍະ"

## ໔໓໕. ອະທຳມະວັກຄາທິກຳມະກະຖາ

## ວ່າດ້ວຍກຳທີ່ແບ່ງພວກໂດຍບໍ່ຊອບທຳເປັນຕົ້ນ

## ເລື້ອງພິກຂຸຊາວນະຄອນຈຳປາເຮັດກຳແບ່ງພວກໂດຍບໍ່ຊອບທຳເປັນຕົ້ນ

[໓໘໔] ສະໄໝນັ້ນ ພວກພິກຂຸໃນນະຄອນຈຳປາເຮັດກຳແນວນີ້ ຄື ເຮັດກຳແບ່ງພວກໂດຍບໍ່ຊອບທຳ ເຮັດກຳພ້ອມພຽງກັນໂດຍບໍ່ຊອບທຳ ເຮັດກຳແບ່ງພວກໂດຍຖືກຕ້ອງຕາມທຳ

ເຮັດກຳແບ່ງພວກໂດຍທຳປະຕິຮູປະ[1] ເຮັດກຳພ້ອມພຽງກັນໂດຍທຳປະຕິຮູປະ ພິກຂຸອົງດຽວລົງອຸກເຂປະນິຍະກຳພິກຂຸອົງດຽວແດ່ ພິກຂຸອົງດຽວລົງອຸກເຂປະນິຍະກຳພິກຂຸ ໔ ອົງແດ່ ພິກຂຸອົງດຽວລົງອຸກເຂປະນິຍະກຳ ພິກຂຸຫຼາຍອົງແດ່ ພິກຂຸອົງດຽວລົງອຸກເຂປະນິຍະກຳສົງແດ່ ພິກຂຸ ໔ ອົງອຸກເຂປະນິຍະກຳພິກຂຸອົງດຽວແດ່ ພິກຂຸ ໔ ອົງລົງອຸກເຂປະນິຍະກຳພິກຂຸ ໔ ອົງແດ່ ພິກຂຸ ໔ ອົງລົງອຸກເຂປະນິຍະກຳພິກຂຸຫຼາຍອົງແດ່ ພິກຂຸ ໔ ອົງລົງອຸກເຂປະນິຍະກຳສົງແດ່ ພິກຂຸຫຼາຍອົງລົງອຸກເຂປະນິຍະກຳພິກຂຸອົງດຽວແດ່ ພິກຂຸຫຼາຍອົງລົງອຸກເຂປະນິຍະກຳພິກຂຸ ໔ ອົງແດ່ ພິກຂຸຫຼາຍອົງລົງອຸກເຂປະນິຍະກຳພິກຂຸຫຼາຍອົງແດ່ ພິກຂຸຫຼາຍອົງລົງອຸກເຂປະນິຍະກຳສົງແດ່ ສົງລົງອຸກເຂປະນິຍະກຳສົງແດ່

ບັນດາພິກຂຸຜູ້ມັກໜ້ອຍ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸໃນນະຄອນຈຳປາຈຶ່ງເຮັດກຳແນວນີ້ນໍ ຄື ເຮັດກຳແບ່ງພວກໂດຍບໍ່ຊອບທຳ ຯລຯ ສົງ ລົງອຸກເຂປະນິຍະກຳສົງແດ່" ບັດແລ້ວຈຶ່ງນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້ ຯລຯ

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພວກພິກຂຸໃນນະຄອນຈຳປາເຮັດກຳແນວນີ້ ຄື ເຮັດກຳແບ່ງພວກໂດຍບໍ່ຊອບທຳ ຯລຯ ສົງລົງອຸກເຂປະນິຍະກຳສົງແດ່ ແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິຊົງສະແດງທຳມີກະຖາແລ້ວຮັບສັ່ງກັບພິກຂຸທັງຫຼາຍວ່າ

## ເລື້ອງພຣະຜູ້ມີພຣະພາກເຈົ້າຕັດຫ້າມຍ້ອນບໍ່ຊອບທຳ

[໓໗໓] ພິກຂຸທັງຫຼາຍ ຖ້າເປັນກຳທີ່ແບ່ງພວກໂດຍບໍ່ຊອບທຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຖ້າເປັນກຳທີ່ພ້ອມພຽງກັນໂດຍບໍ່ຊອບທຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຖ້າເປັນກຳທີ່ແບ່ງພວກໂດຍຖືກຕ້ອງຕາມທຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຖ້າເປັນກຳທີ່ແບ່ງພວກໂດຍທຳປະຕິຮູປະ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຖ້າກຳທີ່ພ້ອມພຽງກັນໂດຍທຳປະຕິຮູປະ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ພິກຂຸອົງດຽວລົງອຸກເຂປະນິຍະກຳພິກຂຸອົງດຽວ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ພິກຂຸອົງດຽວລົງອຸກເຂປະນິຍະກຳພິກຂຸ ໔ ອົງ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ພິກຂຸອົງດຽວລົງອຸກເຂປະນິຍະກຳພິກຂຸຫຼາຍອົງ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ພິກຂຸອົງດຽວລົງອຸກເຂປະນິຍະກຳສົງ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ພິກຂຸ ໔ ອົງລົງອຸກເຂປະນິຍະກຳພິກຂຸອົງດຽວ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ພິກຂຸ ໔ ອົງລົງອຸກເຂປະນິຍະກຳພິກຂຸ ໔ ອົງ ບໍ່ຈັດເປັນກຳແລະບໍ່ຄວນ

ເຮັດ ພິກຂຸ ໔ ອົງລົງອຸກເຂປະນີຍະກຳພິກຂຸຫຼາຍອົບໍ່ຈັດເປັນກຳແລະບໍ່ຄວນເຮັດ ພິກຂຸ ໔ ອົງລົງອຸກເຂປະນີຍະກຳສົງ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ພິກຂຸຫຼາຍອົງລົງອຸກເຂປະນີຍະກຳພິກຂຸອົງດຽວ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ພິກຂຸຫຼາຍອົງລົງອຸກເຂປະນີຍະກຳພິກຂຸ ໔ ອົງ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ພິກຂຸຫຼາຍອົງລົງອຸກເຂປະນີຍະກຳພິກຂຸຫຼາຍອົງ ບໍ່ຈັດເປັນກຳ ແລະບໍ່ຄວນເຮັດ ພິກຂຸຫຼາຍອົງລົງອຸກເຂປະນີຍະກຳສົງ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ສົງລົງອຸກເຂປະນີຍະກຳສົງ ບໍ່ຈັດເປັນກຳແລະບໍ່ຄວນເຮັດ

## ກຳ ໔ ປະເພດ

[໓໘໔] ພິກຂຸທັງຫຼາຍ ກຳ ມີ ໔ ປະເພດເຫຼົ່ານີ້ ຄື

໑. ກຳແບ່ງພວກໂດຍບໍ່ຊອບທຳ (ອະທຳມະວັກຄະກຳ)
໒. ກຳພ້ອມພຽງກັນໂດຍບໍ່ຊອບທຳ (ອະທຳມະສະມັກຄະກຳ)
໓. ກຳແບ່ງພວກໂດຍຖືກຕ້ອງຕາມທຳ (ທຳມະວັກຄະກຳ)
໔. ກຳພ້ອມພຽງກັນໂດຍຖືກຕ້ອງຕາມທຳ (ທຳມະສະມັກຄະກຳ)

ພິກຂຸທັງຫຼາຍ ໃນກຳ ໔ ປະເພດນັ້ນ ກຳທີ່ແບ່ງພວກໂດຍບໍ່ຊອບທຳ ນີ້ຊື່ວ່າບໍ່ຖືກຕ້ອງ ບໍ່ຄວນແກ່ເຫດ ຍ້ອນບໍ່ຊອບທຳ ຍ້ອນແບ່ງພວກ ພິກຂຸທັງຫຼາຍ ກຳແບບນີ້ບໍ່ຄວນເຮັດແລະເຮົາກໍບໍ່ອະນຸຍາດ

ພິກຂຸທັງຫຼາຍ ໃນກຳ ໔ ປະເພດນັ້ນ ກຳທີ່ພ້ອມພຽງກັນໂດຍບໍ່ຊອບທຳນີ້ຊື່ວ່າບໍ່ຖືກຕ້ອງ ບໍ່ຄວນແກ່ເຫດ ຍ້ອນບໍ່ຊອບທຳ ພິກຂຸທັງຫຼາຍ ກຳແບບນີ້ບໍ່ຄວນເຮັດແລະເຮົາກໍບໍ່ອະນຸຍາດ

ພິກຂຸທັງຫຼາຍ ໃນກຳ ໔ ປະເພດນັ້ນ ກຳທີ່ແບ່ງພວກໂດຍຖືກຕ້ອງຕາມທຳນີ້ກໍຊື່ວ່າບໍ່ຖືກຕ້ອງ ບໍ່ຄວນແກ່ເຫດ ຍ້ອນແບ່ງພວກ ພິກຂຸທັງຫຼາຍ ກຳແບບນີ້ບໍ່ຄວນເຮັດແລະເຮົາກໍບໍ່ອະນຸຍາດ

ພິກຂຸທັງຫຼາຍ ໃນກຳ ໔ ປະເພດນັ້ນ ກຳທີ່ພ້ອມພຽງກັນໂດຍຊອບທຳນີ້ຊື່ວ່າຖືກຕ້ອງ ຄວນແກ່ເຫດ ຍ້ອນຊອບທຳ ຍ້ອນພ້ອມພຽງກັນ ພິກຂຸທັງຫຼາຍ ກຳແບບນີ້ຄວນເຮັດແລະເຮົາກໍອະນຸຍາດ

ພິກຂຸທັງຫຼາຍ ຍ້ອນເຫດນັ້ນແລ ພວກທ່ານເພິ່ງຕັ້ງໃຈຮູ້ແບບນີ້ວ່າ ພວກເຮົາ ຈະເຮັດກຳທີ່ພ້ອມພຽງກັນໂດຍຖືກຕ້ອງຕາມທຳ”

# ໔໓໖. ຍັດຕິວິປັນນະກັບປາທິກະຖາ

## ວ່າດ້ວຍກຳທີ່ຍັດຕິວິບັດເປັນຕົ້ນ

[໓໗໔] ສະໄໝນັ້ນ ພວກພິກຂຸສັບພັກຄີເຮັດກຳແນວນີ້ ຄື ເຮັດກຳແບ່ງພວກ ໂດຍບໍ່ຊອບທຳ ເຮັດກຳພ້ອມພຽງກັນໂດຍບໍ່ຊອບທຳ ເຮັດກຳແບ່ງພວກໂດຍຖືກຕ້ອງຕາມທຳ ເຮັດກຳແບ່ງພວກໂດຍທຳປະຕິຣູປະ ເຮັດກຳພ້ອມພຽງກັນໂດຍທຳປະຕິຣູປະ ເຮັດກຳທີ່ຍັດຕິວິບັດແຕ່ອະນຸສາວະນາສົມບູນແດ່ ເຮັດກຳທີ່ອະນຸສາວະນາວິບັດແຕ່ຍັດຕິສົມບູນແດ່ ເຮັດກຳທີ່ຍັດຕິວິບັດອະນຸສາວະນາວິບັດແດ່ ເຮັດກຳເວັ້ນຈາກທຳ°ແດ່ ເຮັດກຳເວັ້ນຈາກວິໄນແດ່ ເຮັດກຳເວັ້ນຈາກສັດຖຸສາດແດ່ ເຮັດກຳທີ່ຖືກຄ້ານແລ້ວແລະຂືນເຮັດ ບໍ່ຊອບທຳ ເປັນກຳບໍ່ຖືກຕ້ອງ ບໍ່ຄວນແກ່ເຫດແດ່

ບັນດາພິກຂຸຜູ້ມັກໜ້ອຍ ຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພວກພິກຂຸສັບພັກຄີ ຈຶ່ງເຮັດກຳແນວນີ້ນໍ ຄື ເຮັດກຳແບ່ງພວກໂດຍບໍ່ຊອບທຳ ເຮັດກຳພ້ອມພຽງກັນ ໂດຍບໍ່ຊອບທຳ ເຮັດກຳແບ່ງພວກໂດຍຖືກຕ້ອງຕາມທຳ ເຮັດກຳແບ່ງພວກໂດຍທຳປະຕິຣູປະ ເຮັດກຳພ້ອມພຽງກັນໂດຍທຳປະຕິຣູປະ ເຮັດກຳທີ່ຍັດຕິວິບັດແຕ່ອະນຸສາວະນາສົມບູນແດ່ ເຮັດກຳທີ່ອະນຸສາວະນາວິບັດແຕ່ຍັດຕິສົມບູນແດ່ ເຮັດກຳທີ່ຍັດຕິວິບັດອະນຸສາວະນາວິບັດແດ່ ເຮັດກຳເວັ້ນຈາກທຳແດ່ ເຮັດກຳເວັ້ນຈາກວິໄນແດ່ ເຮັດກຳເວັ້ນຈາກສັດຖຸສາດແດ່ ເຮັດກຳທີ່ຖືກຄ້ານແລ້ວແລະຂືນເຮັດ ບໍ່ຊອບທຳ ເປັນກຳບໍ່ຖືກຕ້ອງ ບໍ່ຄວນແກ່ເຫດແດ່

ລຳດັບນັ້ນ ພິກຂຸເຫຼົ່ານັ້ນໄດ້ນຳເລື້ອງນີ້ໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຊົງສອບຖາມວ່າ "ພິກຂຸທັງຫຼາຍ ໄດ້ຂ່າວວ່າ ພິກຂຸສັບພັກຄີເຮັດກຳແນວນີ້ແມ່ນບໍ? ຄື ແບ່ງພວກເຮັດກຳໂດຍບໍ່ຊອບທຳ ຯລຯ ເຮັດກຳທີ່ຖືກຄ້ານ ແລ້ວແລະຂືນເຮັດ ບໍ່ຊອບທຳ ເປັນກຳບໍ່ຖືກຕ້ອງ ບໍ່ຄວນແກ່ເຫດແດ່"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິວ່າ ຯລຯ ເມື່ອຊົງຕຳໜິແລ້ວຊົງສະແດງທັມມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ

### ເລື້ອງແບ່ງພວກໂດຍບໍ່ຊອບທຳບໍ່ຈັດເປັນກຳແລະບໍ່ຄວນເຮັດ

[໓໗໖] ພິກຂຸທັງຫຼາຍ ຖ້າເປັນກຳທີ່ແບ່ງພວກໂດຍບໍ່ຊອບທຳ ບໍ່ຈັດເປັນກຳ ແລະບໍ່ຄວນເຮັດ ຖ້າເປັນກຳທີ່ພ້ອມພຽງກັນໂດຍບໍ່ຊອບທຳ ບໍ່ຈັດເປັນກຳ ແລະບໍ່ຄວນເຮັດ ຖ້າເປັນກຳທີ່ແບ່ງພວກໂດຍຖືກຕ້ອງຕາມທຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຖ້າເປັນກຳທີ່ແບ່ງພວກໂດຍທຳ

ປະຕິຮູປະ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຖ້າເປັນກຳທີ່ພ້ອມພຽງກັນໂດຍທຳປະຕິຮູປະບໍ່ຈັດເປັນກຳແລະບໍ່ຄວນເຮັດ ຖ້າເປັນກຳຍັດຕິວິບັດແຕ່ອະນຸສາວະນາສົມບູນ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຖ້າເປັນກຳອະນຸສາວະນາວິບັດແຕ່ຍັດຕິສົມບູນ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຖ້າເປັນກຳທີ່ຍັດຕິວິບັດ ອະນຸສາວະນາວິບັດ ບໍ່ຈັດເປັນກຳແລະບໍ່ຄວນເຮັດ

ກຳທີ່ເວັ້ນຈາກທຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ກຳທີ່ເວັ້ນຈາກວິໄນ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ກຳທີ່ເວັ້ນຈາກສັດຖຸສາດ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຖ້າກຳທີ່ຖືກຄ້ານແລ້ວຂືນເຮັດ ບໍ່ຊອບທຳ ບໍ່ຖືກຕ້ອງແລະບໍ່ຄວນແກ່ເຫດ ກໍບໍ່ຈັດເປັນກຳແລະບໍ່ຄວນເຮັດ

## ກຳ ໖ ປະເພດ

[໓໘໗] ພິກຂຸທັງຫຼາຍ ກຳມີ ໖ ປະເພດເຫຼົ່ານີ້ ຄື

໑. ກຳບໍ່ຊອບທຳ (ອະທຳມະກຳ)[១]
໒. ກຳແບ່ງພວກ(ວັກຄະກຳ)
໓. ກຳພ້ອມພຽງກັນ (ສະມັກຄະກຳ)
໔. ກຳແບ່ງພວກໂດຍທຳປະຕິຮູປະ(ທຳມະປະຕິຮູປະວັກຄະກຳ)
໕. ກຳພ້ອມພຽງກັນໂດຍທຳປະຕິຮູປະ (ທຳມະປະຕິຮູປະສະມັກຄະກຳ)
໖. ກຳພ້ອມພຽງກັນໂດຍຊອບທຳ (ທຳມະສະມັກຄະກຳ)

## ອະທິບາຍກຳບໍ່ຊອບທຳ

ພິກຂຸທັງຫຼາຍ ກໍກຳບໍ່ຊອບທຳ ອັນໃດແດ່ ຄື ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າເຮັດກຳດ້ວຍຍັດຕິ ໑ ຄັ້ງ ບໍ່ສູດກຳມະວາຈາ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າເຮັດກຳດ້ວຍຍັດຕິ ໒ ຄັ້ງ ແຕ່ບໍ່ສູດກຳມະວາຈາ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າເຮັດກຳດ້ວຍກຳມະວາຈາ ໑ ຄັ້ງ ແຕ່ບໍ່ຕັ້ງຍັດຕິ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າເຮັດກຳດ້ວຍກຳມະວາຈາ ໒ ຄັ້ງ ແຕ່ບໍ່ຕັ້ງຍັດຕິ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າເຮັດກຳດ້ວຍຍັດຕິ ໑ ຄັ້ງ ແຕ່ບໍ່ສູດກຳມະວາຈາ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າເຮັດກຳດ້ວຍຍັດຕິ ໒ ຄັ້ງ ແຕ່ບໍ່ສູດກຳມະວາຈາ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າເຮັດກຳດ້ວຍຍັດຕິ ໓ ຄັ້ງ ແຕ່ບໍ່ສູດກຳມະວາຈາ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າເຮັດກຳດ້ວຍຍັດຕິ ໔ ຄັ້ງ ແຕ່ບໍ່ສູດກຳມະວາຈາ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າເຮັດກຳດ້ວຍກຳມະວາຈາ ໑ ຄັ້ງ ແຕ່ບໍ່ຕັ້ງຍັດຕິ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າເຮັດກຳດ້ວຍກຳມະວາຈາ ໒ ຄັ້ງ ແຕ່ບໍ່ຕັ້ງຍັດຕິ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າເຮັດກຳດ້ວຍກຳມະວາຈາ ໓ ຄັ້ງ ແຕ່ບໍ່ຕັ້ງຍັດຕິ ຊື່ວ່າກຳບໍ່ຊອບທຳ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າເຮັດກຳດ້ວຍກຳມະວາຈາ ໔ ຄັ້ງ ແຕ່ບໍ່ຕັ້ງຍັດຕິ ຊື່ວ່າກຳບໍ່ຊອບທຳ ພິກຂຸທັງຫຼາຍ ນີ້ຮຽກວ່າກຳບໍ່ຊອບທຳ (໑)

## ອະທິບາຍກຳທີ່ແບ່ງພວກເຮັດ

ພິກຂຸທັງຫຼາຍ ກໍກຳທີ່ແບ່ງພວກ ອັນໃດແດ່ ຄື ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນບໍ່ໄດ້ມາ ສັນທະຂອງພິກຂຸຜູ້ຄວນແກ່ສັນທະກໍບໍ່ໄດ້ນຳມາ ພິກຂຸທີ່ຢູ່ພ້ອມໜ້າກໍຄັດຄ້ານ ຊື່ວ່າກຳທີ່ແບ່ງພວກ

ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາ ແຕ່ສັນທະຂອງພິກຂຸຜູ້ຄວນແກ່ສັນທະບໍ່ໄດ້ນຳມາ ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວຄັດຄ້ານ ຊື່ວ່າກຳທີ່ແບ່ງພວກ

ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາ ສັນທະຂອງພິກຂຸຜູ້ຄວນແກ່ສັນທະກໍໄດ້ນຳມາແລ້ວ ແຕ່ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວຄັດຄ້ານ ຊື່ວ່າກຳທີ່ແບ່ງພວກ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນບໍ່ມາ ສັນທະຂອງພິກຂຸຜູ້ຄວນແກ່ສັນທະກໍຍັງບໍ່ໄດ້ນຳມາ ພິກຂຸທີ່ຢູ່ພ້ອມໜ້າ ກໍຄັດຄ້ານ ຊື່ວ່າກຳທີ່ແບ່ງພວກ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາ ແຕ່ສັນທະຂອງພິກຂຸຜູ້ຄວນແກ່ສັນທະບໍ່ໄດ້ນຳມາ ພິກຂຸທີ່ຢູ່ພ້ອມໜ້າ ກັນແລ້ວຄັດຄ້ານ ຊື່ວ່າກຳທີ່ແບ່ງພວກ

ໃນຍັດຕິຈະຕຸດຖະກຳ ຖ້າພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາ ສັນທະຂອງພິກຂຸຜູ້ຄວນແກ່ສັນທະກໍນຳມາແລ້ວ ແຕ່ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວຄັດຄ້ານ ຊື່ວ່າກຳທີ່ແບ່ງພວກ

ພິກຂຸທັງຫຼາຍ ນີ້ຮຽກວ່າກຳທີ່ແບ່ງພວກ (໔)

## ອະທິບາຍກຳທີ່ພ້ອມພຽງກັນເຮັດ

ພິກຂຸທັງຫຼາຍ ກໍກຳທີ່ພ້ອມພຽງກັນ ອັນໃດແດ່ ຄື ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາ ສັນທະ ຂອງພິກຂຸຜູ້ຄວນແກ່ສັນທະກໍໄດ້ນຳມາແລ້ວ ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວກໍບໍ່ຄັດຄ້ານ ຊື່ວ່າ ກຳທີ່ພ້ອມພຽງກັນ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາ ສັນທະຂອງພິກຂຸຜູ້ຄວນແກ່ສັນທະໄດ້ນຳມາແລ້ວ ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວກໍບໍ່ຄັດຄ້ານ ຊື່ວ່າກຳທີ່ພ້ອມພຽງກັນ

ພິກຂຸທັງຫຼາຍ ນີ້ຮຽກວ່າກຳທີ່ພ້ອມພຽງກັນ (໖)

## ອະທິບາຍກຳແບ່ງພວກໂດຍທຳປະຕິຣູປະ

ພິກຂຸທັງຫຼາຍ ກໍກຳທີ່ແບ່ງພວກໂດຍທຳປະຕິຣູປະ ອັນໃດແດ່ ຄື ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າສູດກຳມະວາຈາກ່ອນ ຕັ້ງຍັດຕິພາຍຫຼັງ ພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນບໍ່ມາ ສັນທະຂອງພິກຂຸຜູ້ຄວນແກ່ສັນທະບໍ່ໄດ້ນຳມາ ພວກທີ່ຢູ່ພ້ອມໜ້າກໍຄັດຄ້ານ ຊື່ວ່າກຳທີ່ແບ່ງພວກໂດຍທຳປະຕິຣູປະ

ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າສູດກຳມະວາຈາກ່ອນ ຕັ້ງຍັດຕິພາຍຫຼັງ ພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາ ແຕ່ສັນທະຂອງພິກຂຸຜູ້ຄວນແກ່ສັນທະບໍ່ໄດ້ນຳມາ ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວກໍຄັດຄ້ານ ຊື່ວ່າກຳທີ່ແບ່ງພວກໂດຍທຳປະຕິຣູປະ

ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າສູດກຳມະວາຈາກ່ອນ ຕັ້ງຍັດຕິພາຍຫຼັງ ພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາ ສັນທະຂອງພິກຂຸຜູ້ຄວນແກ່ສັນທະກໍນຳມາແລ້ວ ແຕ່ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວຄັດຄ້ານ ຊື່ວ່າກຳທີ່ແບ່ງພວກໂດຍທຳປະຕິຣູປະ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າສູດກຳມະວາຈາກ່ອນ ຕັ້ງຍັດຕິພາຍຫຼັງ ພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນບໍ່ມາ ສັນທະຂອງພິກຂຸຜູ້ຄວນແກ່ສັນທະກໍບໍ່ໄດ້ນຳມາ ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວຄັດຄ້ານ ຊື່ວ່າກຳທີ່ແບ່ງພວກໂດຍທຳປະຕິຣູປະ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າສູດກຳມະວາຈາກ່ອນ ຕັ້ງຍັດຕິພາຍຫຼັງ ພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາແລ້ວ ແຕ່ສັນທະຂອງພິກຂຸຜູ້ຄວນແກ່ສັນທະບໍ່ໄດ້ນຳມາ ພິກຂຸທີ່ຢູ່ພ້ອມໜ້າກໍຄັດຄ້ານ ຊື່ວ່າກຳທີ່ແບ່ງພວກໂດຍທຳປະຕິຣູປະ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າສູດກຳມະວາຈາກ່ອນ ຕັ້ງຍັດຕິພາຍຫຼັງ ພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາແລ້ວ ສັນທະຂອງພິກຂຸຜູ້ຄວນແກ່ສັນທະກໍນຳມາແລ້ວ ແຕ່ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວຄັດຄ້ານ ຊື່ວ່າກຳທີ່ແບ່ງພວກໂດຍທຳປະຕິຣູປະ

ພິກຂຸທັງຫຼາຍ ນີ້ຮຽກວ່າກຳທີ່ແບ່ງພວກໂດຍທຳປະຕິຣູປະ (໔)

## ອະທິບາຍກຳທີ່ພ້ອມພຽງກັນໂດຍທຳປະຕິຣູປະ

ພິກຂຸທັງຫຼາຍ ກໍກຳທີ່ພ້ອມພຽງກັນໂດຍທຳປະຕິຣູປະ ອັນໃດແດ່ ຄື ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າສູດກຳມະວາຈາກ່ອນ ຕັ້ງຍັດຕິພາຍຫຼັງພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາແລ້ວ ສັນທະຂອງພິກຂຸຜູ້ຄວນແກ່ສັນທະ ກໍນຳມາແລ້ວ ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວກໍບໍ່ຄັດຄ້ານ ຊື່ວ່າກຳພ້ອມພຽງກັນ ໂດຍທຳປະຕິຣູປະ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າສູດກຳມະວາຈາກ່ອນ ຕັ້ງຍັດຕິພາຍຫຼັງ ພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາແລ້ວ ສັນທະຂອງພິກຂຸຜູ້ຄວນແກ່ສັນທະກໍນຳມາແລ້ວ ພິກຂຸທີ່ຢູ່ພ້ອມໜ້າກັນບໍ່ຄັດຄ້ານ ຊື່ວ່າກຳພ້ອມພຽງກັນໂດຍທຳປະຕິຣູປະ

ພິກຂຸທັງຫຼາຍ ນີ້ຮຽກວ່າກຳພ້ອມພຽງກັນໂດຍທຳປະຕິຣູປະ (໕)

## ອະທິບາຍກຳທີ່ພ້ອມພຽງກັນໂດຍຖືກຕ້ອງຕາມທຳ

ພິກຂຸທັງຫຼາຍ ກໍກຳທີ່ພ້ອມພຽງກັນໂດຍຖືກຕ້ອງຕາມທຳ ອັນໃດແດ່ ຄື ພິກຂຸທັງຫຼາຍ ໃນຍັດຕິທຸຕິຍະກຳ ຖ້າຕັ້ງຍັດຕິກ່ອນ ເຮັດກຳດ້ວຍກຳມະວາຈາ ໑ ຄັ້ງ ພາຍຫຼັງ ພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາແລ້ວ ສັນທະຂອງພິກຂຸຜູ້ຄວນແກ່ສັນທະກໍນຳມາແລ້ວ ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວກໍບໍ່ຄັດຄ້ານ ຊື່ວ່າກຳພ້ອມພຽງກັນໂດຍຖືກຕ້ອງຕາມທຳ

ພິກຂຸທັງຫຼາຍ ໃນຍັດຕິຈະຕຸດຖະກຳ ຖ້າຕັ້ງຍັດຕິກ່ອນ ເຮັດກຳດ້ວຍກຳມະວາຈາ ໓ ຄັ້ງພາຍຫຼັງ ພິກຂຸຜູ້ເຂົ້າກຳກຳນົດຈຳນວນໄວ້ທີ່ໃດ ພິກຂຸເຫຼົ່ານັ້ນມາແລ້ວ ສັນທະຂອງພິກຂຸຜູ້ຄວນແກ່ສັນທະກໍນຳມາແລ້ວ ພິກຂຸທີ່ຢູ່ພ້ອມໜ້າກັນແລ້ວກໍບໍ່ຄັດຄ້ານ ຊື່ວ່າກຳພ້ອມພຽງກັນໂດຍຖືກຕ້ອງຕາມທຳ

ພິກຂຸທັງຫຼາຍ ນີ້ຮຽກວ່າກຳພ້ອມພຽງກັນໂດຍຖືກຕ້ອງຕາມທຳ (໖)

## ໔໓໗. ຈະຕຸວັກຄະກະຣະນາທິກະຖາ

## ວ່າດ້ວຍກຳທີ່ສົງກຳນົດຈຳນວນ ໔ ອົງເຮັດເປັນຕົ້ນ

## ເລື້ອງສົງ ໕ ປະເພດ

[໓໘໘] ສົງມີ ໕ ປະເພດ ຄື

໑. ສົງຈະຕຸວັກ (ກຳນົດຈຳນວນ ໔ ອົງ)
໒. ສົງປັນຈະວັກ (ກຳນົດຈຳນວນ ໕ ອົງ)
໓. ສົງທະສະວັກ (ກຳນົດຈຳນວນ ໑໐ ອົງ)
໔. ສົງວີສະຕິວັກ (ກຳນົດຈຳນວນ ໒໐ ອົງ)
໕. ສົງອະຕິເຣກວີສະຕິວັກ (ກຳນົດຈຳນວນ ເກີນ ໒໐ ອົງ)

ພິກຂຸທັງຫຼາຍ ໃນສົງເຫຼົ່ານັ້ນ ສົງຈະຕຸວັກພ້ອມພຽງກັນໂດຍທຳ ເຂົ້າກຳໄດ້ທຸກຢ່າງ ຍົກເວັ້ນກຳ ໓ ຢ່າງ ຄື ອຸປະສົມບົດ ປະວາຣະນາ ອັບພານ

ພິກຂຸທັງຫຼາຍ ສົງປັນຈະວັກພ້ອມພຽງກັນໂດຍທຳ ເຂົ້າກຳໄດ້ທຸກຢ່າງ ຍົກເວັ້ນກຳ ໒ ຢ່າງ ຄື ອຸປະສົມບົດໃນມັດຊິມະຊົນນະບົດ ອັບພານ

ພິກຂຸທັງຫຼາຍ ສົງທະສະວັກພ້ອມພຽງກັນໂດຍທຳ ເຂົ້າກຳໄດ້ທຸກຢ່າງ ຍົກເວັ້ນອັບພານແນວດຽວ

ພິກຂຸທັງຫຼາຍ ສົງວີສະຕິວັກພ້ອມພຽງກັນໂດຍທຳ ເຂົ້າກຳໄດ້ທຸກຢ່າງ

ພິກຂຸທັງຫຼາຍ ສົງອະຕິເຣກະວີສະຕິວັກພ້ອມພຽງກັນໂດຍທຳ ເຂົ້າກຳໄດ້ທຸກຢ່າງ

## ເລື້ອງກຳທີ່ສົງຈະຕຸວັກເພິ່ງເຮັດ

[໓໘໙] ພິກຂຸທັງຫຼາຍ ຖ້າກຳທີ່ສົງຈະຕຸວັກເພິ່ງເຮັດ ສົງມີພິກຂຸນີເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ

ພິກຂຸທັງຫຼາຍ ຖ້າກຳທີ່ສົງຈະຕຸວັກເພິ່ງເຮັດ ສົງມີສິກຂະມານາເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີສາມະເນນເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີສາມະເນຣີເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸຜູ້ບອກລາສິກຂາເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸ ຜູ້ຕ້ອງອັນຕິມະວັດຖຸເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸຜູ້ຖືກສົງລົງອຸກເຂປະນີຍະກຳ ຍ້ອນບໍ່ເຫັນວ່າເປັນອາບັດເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີບັນເດາະ ເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີຄົນລັກເພດເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸຜູ້ເຂົ້າຮີດເດຍຣະຖີເປັນທີ ໔ ເຮັດກຳບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີສັດເດຍຣັດສານ ເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີຄົນຜູ້ຂ້າມານດາເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີຄົນຜູ້ຂ້າບິດາເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີຄົນຜູ້ຂ້າພຣະອະຣະຫັນເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳ ແລະບໍ່ຄວນເຮັດ ຯລຯ ມີຄົນຜູ້ປະທຸດສະຮ້າຍພິກຂຸນີເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸຜູ້ທຳລາຍສົງເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸຜູ້ທຳຮ້າຍພຣະສາດສະດາ ຈົນເຖິງຫໍ້ພຣະໂລຫິດເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີອຸພະໂຕ ພະຍັນຊະນະກະເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸຜູ້ເປັນນານາ

ສັງວາດເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸຜູ້ຢູ່ໃນນານາສີມາເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ມີພິກຂຸຜູ້ຢູ່ໃນອາກາດ ດ້ວຍລິດເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ ຯລຯ ສົງເຮັດກຳແກ່ພິກຂຸໃດ ມີພິກຂຸນັ້ນເປັນທີ ໔ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ

**ເລື້ອງກຳທີ່ສົງຈະຕຸວັກເພິ່ງເຮັດ ຈົບ**

## ເລື້ອງກຳທີ່ສົງປັນຈະວັກເພິ່ງເຮັດ

[໓໙໐] ພິກຂຸທັງຫຼາຍ ຖ້າກຳທີ່ສົງປັນຈະວັກເພິ່ງເຮັດ ສົງມີພິກຂຸນີເປັນທີ ໕ ເຮັດກຳ ບໍ່ຈັດເປັນກຳແລະບໍ່ຄວນເຮັດ

ພິກຂຸທັງຫຼາຍ ຖ້າກຳທີ່ສົງປັນຈະວັກເພິ່ງເຮັດ ສົງມີສິກຂະມານາເປັນທີ ໕ ຯລຯ ມີສາມະເນນເປັນທີ ໕ ຯລຯ ຯລຯ ມີສາມະເນຣີເປັນທີ ໕ ຯລຯ ຯລຯ ມີພິກຂຸຜູ້ບອກລາສິກຂາ

ພິກຂຸທັງຫຼາຍ ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳແບ່ງພວກໂດຍບໍ່ຊອບທຳ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

[໔໓໐] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ເອົາລະພວກເຮົາຈະລົງຕັດຊະນິຍະກຳແກ່ພິກຂຸອົງນັ້ນ" ແລ້ວພ້ອມພຽງກັນໂດຍບໍ່ຊອບທຳລົງຕັດຊະນິຍະກຳແກ່ພິກຂຸອົງນັ້ນ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍ ບໍ່ຊອບທຳ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

[໔໓໑] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ເອົາລະ ພວກເຮົາຈະລົງຕັດຊະນິຍະກຳແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍຖືກຕ້ອງຕາມທຳລົງຕັດຊະນິຍະກຳແກ່ພິກຂຸອົງນັ້ນ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳແບ່ງພວກໂດຍຖືກຕ້ອງຕາມທຳ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

[໔໓໔] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວ

ນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ເອົາລະ ພວກເຮົາຈະລົງຕັດຊະນີຍະກຳແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍທຳປະຕິຮູປະລົງຕັດຊະນີຍະກຳແກ່ພິກຂຸອົງນັ້ນ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຮູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

[໔໓໓] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ເອົາລະ ພວກເຮົາຈະລົງຕັດຊະນີຍະກຳແກ່ພິກຂຸອົງນັ້ນ" ແລ້ວພ້ອມພຽງກັນໂດຍທຳປະຕິຮູປະລົງຕັດຊະນີຍະກຳແກ່ພິກຂຸອົງນັ້ນ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຮູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

## ໔໕໗. ນິຍະສະກຳມະວິວາທະກະຖາ

## ວ່າດ້ວຍຄວາມຂັດແຍ່ງໃນນິຍະສະກຳ

[໔໓໔] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸເປັນຄົນໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ມີມາຣະຍາດບໍ່ສົມຄວນ ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດອັນບໍ່ສົມຄວນ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ເປັນຄົນໂງ່ຈ້າ ບໍ່ສະຫຼາດ ມີອາບັດຫຼາຍ ມີມາຣະຍາດບໍ່ສົມຄວນ ຢູ່ຄຸກຄີກັບຄະລືຫັດດ້ວຍການຄຸກຄີກັບຄະລືຫັດ

ອັນບໍ່ສົມຄວນ ເອົາລະ ພວກເຮົາຈະລົງນິຍະສະກຳ ແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລົງນິຍະສະກຳແກ່ພິກຂຸອົງນັ້ນ ຯລຯ ຯລຯ ພ້ອມພຽງກັນໂດຍບໍ່ຊອບທຳ ຯລຯ ຯລຯ ແບ່ງພວກໂດຍຖືກຕ້ອງຕາມທຳ ຯລຯ ຯລຯ ແບ່ງພວກໂດຍ ທຳປະຕິຮູປະ ຯລຯ ຯລຯ ພ້ອມພຽງກັນໂດຍທຳປະຕິຮູປະ ຯລຯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຮູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

## ໔໕໗. ປັບພາຊະນີຍະກຳມະວິວາທະກະຖາ

### ວ່າດ້ວຍຄວາມຂັດແຍ່ງໃນປັບພາຊະນີຍະກຳ

[໔໓໕] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸປະທຸດສະຮ້າຍຕະກູນ ມີມາຣະຍາດຊົ່ວຊາມ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ປະທຸດສະຮ້າຍຕະກູນ ມີມາຣະຍາດຊົ່ວຊາມ ເອົາລະ ພວກເຮົາຈະລົງປັບພາຊະນີຍະກຳແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລົງປັບພາຊະນີຍະກຳແກ່ພິກຂຸອົງນັ້ນ ຯລຯ ຯລຯ ພ້ອມພຽງກັນໂດຍບໍ່ຊອບທຳ ຯລຯ ຯລຯ ແບ່ງພວກໂດຍຖືກຕ້ອງຕາມທຳ ຯລຯ ຯລຯ ແບ່ງພວກໂດຍທຳປະຕິຮູປະ ຯລຯ ຯລຯ ພ້ອມພຽງກັນໂດຍທຳປະຕິຮູປະ ຯລຯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວຄັດຄ້ານວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຮູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ຖືກ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

## ໔໕໙. ປະຕິສາຣະນີຍະກຳມະວິວາທະກະຖາ

### ວ່າດ້ວຍຄວາມຂັດແຍ່ງໃນປະຕິສາຣະນີຍະກຳ

[໔໓໖] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸດ່າກ່າວໂທດພວກຄະລືຫັດ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ດ່າກ່າວໂທດພວກຄະລືຫັດ ເອົາລະ ພວກເຮົາຈະລົງປະຕິສາຣະນີຍະກຳແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລົງປະຕິສາຣະນີຍະກຳແກ່ພິກຂຸອົງນັ້ນ ຯລຯ ຯລຯ ພ້ອມພຽງກັນໂດຍບໍ່ຊອບທຳ ຯລຯ ຯລຯ ແບ່ງພວກໂດຍຖືກຕ້ອງຕາມທຳ ຯລຯ ຯລຯ ແບ່ງພວກໂດຍທຳປະຕິຣູປະ ຯລຯ ຯລຯ ພ້ອມພຽງກັນໂດຍທຳປະຕິຣູປະ ຯລຯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຣູປະ ກຳພ້ອມພຽງກັນໂດຍທຳປະຕິຣູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍ ທຳປະຕິຣູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

## ໔໖໐. ອະທັດສະນະອຸກເຂປະນີຍະກຳມະວິວາທະກະຖາ

### ວ່າດ້ວຍຄວາມຂັດແຍ່ງໃນອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ

[໔໓໗] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດແລ້ວບໍ່ປາຖະໜາຈະເຫັນວ່າເປັນອາບັດ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຕ້ອງອາບັດແລ້ວບໍ່ປາຖະໜາຈະເຫັນວ່າເປັນອາບັດ ເອົາລະ ພວກເຮົາຈະລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລົງອຸກເຂປະນີຍະ ກຳຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸອົງນັ້ນ ຯລຯ ຯລຯ ພ້ອມພຽງກັນໂດຍບໍ່ຊອບທຳ ຯລຯ ຯລຯ ແບ່ງພວກໂດຍຖືກຕ້ອງຕາມທຳ ຯລຯ ຯລຯ ແບ່ງພວກໂດຍທຳປະຕິຣູປະ ຯລຯ ຯລຯ ພ້ອມພຽງກັນໂດຍ ທຳປະຕິຣູປະ ຯລຯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຮູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

## ໔໖໑. ອັບປະຕິກຳມະອຸກເຂປະນີຍະກຳມະວິວາທະກະຖາ ວ່າດ້ວຍຄວາມຂັດແຍ່ງໃນອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ

[໔໓໘] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຕ້ອງອາບັດແລ້ວບໍ່ປາຖະໜາຈະເຮັດຄືນອາບັດ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຕ້ອງອາບັດແລ້ວບໍ່ປາຖະໜາຈະເຮັດຄືນອາບັດ ເອົາລະ ພວກເຮົາຈະລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸອົງນັ້ນ ฯລฯ ฯລฯ ພ້ອມພຽງກັນໂດຍບໍ່ຊອບທຳ ฯລฯ ฯລฯ ແບ່ງພວກໂດຍຖືກຕ້ອງຕາມທຳ ฯລฯ ฯລฯ ແບ່ງພວກໂດຍທຳປະຕິຮູປະ ฯລฯ ฯລฯ ພ້ອມພຽງກັນໂດຍທຳປະຕິຮູປະ ฯລฯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຮູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

## ໔໖໔. ອັບປະຕິນິດສັກຄະອຸກເຂປະນີຍະກຳມະວິວາທະກະຖາ ວ່າດ້ວຍຄວາມຂັດແຍ່ງໃນອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ

[໔໓໙] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸບໍ່ປາຖະໜາຈະສະລະທິດຖິບາບ ຖ້າ

ພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ບໍ່ປາຖະໜາສະລະທິດຖິບາບ ເອົາລະ ພວກເຮົາຈະລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸອົງນັ້ນ ຯລຯ ຯລຯ ພ້ອມພຽງກັນໂດຍບໍ່ຊອບທຳ ຯລຯ ຯລຯ ແບ່ງພວກໂດຍຖືກຕ້ອງຕາມທຳ ຯລຯ ຯລຯ ແບ່ງພວກໂດຍທຳປະຕິຮູປະ ຯລຯ ຯລຯ ພ້ອມພຽງກັນໂດຍທຳປະຕິຮູປະ ຯລຯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍ ທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຮູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

## ໔໖໑. ຕັດຊະນີຍະກຳມະປະຕິປັດສັດທິກະຖາ

### ວ່າດ້ວຍຄວາມຂັດແຍ່ງໃນການລະງັບຕັດຊະນີຍະກຳ

[໔໔໐] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງຕັດຊະນີຍະກຳແລ້ວກັບປະພຶດຖືກ ທາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ຖ້າພິກຂຸທັງຫຼາຍ ເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງຕັດຊະນີຍະກຳແລ້ວກັບປະພຶດຖືກ ທາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ເອົາລະພວກເຮົາຈະລະງັບຕັດຊະນີຍະກຳແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລະງັບຕັດຊະນີຍະກຳແກ່ພິກຂຸອົງນັ້ນ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳແບ່ງພວກກັນໂດຍບໍ່ຊອບທຳ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

[໔໔໑] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງຕັດຊະນີຍະກຳແລ້ວກັບປະພຶດຖືກ ທາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ຖ້າພິກຂຸທັງຫຼາຍ ເປີກສາກັນໃນ

ເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງຕັດຊະນີຍະກຳແລ້ວ ກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ເອົາລະ ພວກເຮົາ ຈະລະງັບຕັດຊະນີຍະກຳ ແກ່ພິກຂຸອົງນັ້ນ" ແລ້ວພ້ອມພຽງກັນໂດຍບໍ່ຊອບທຳລະງັບຕັດຊະນີຍະກຳແກ່ພິກຂຸອົງນັ້ນ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນ ໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຣູປະ ກຳ ພ້ອມພຽງກັນໂດຍທຳປະຕິຣູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍ ບໍ່ຊອບ ທຳ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍ ທຳມະວາທີໃນບ່ອນປະຊຸມນັ້ນ

[໔໔໘] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງຕັດຊະນີຍະກຳແລ້ວກັບ ປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ຖ້າພິກຂຸທັງຫຼາຍ ເປີກສາກັນໃນ ເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງຕັດຊະນີຍະກຳແລ້ວ ກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ເອົາລະ ພວກເຮົາ ຈະລະງັບຕັດຊະນີຍະກຳ ແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍຖືກຕ້ອງຕາມທຳລະງັບຕັດຊະນີຍະກຳ ແກ່ພິກຂຸອົງນັ້ນ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນ ໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງ ກັນໂດຍທຳປະຕິຣູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ ກຳແບ່ງພວກກັນໂດຍບໍ່ຊອບທຳ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະ ວາທີໃນບ່ອນປະຊຸມນັ້ນ

[໔໔໙] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງຕັດຊະນີຍະກຳແລ້ວກັບ ປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ຖ້າພິກຂຸທັງຫຼາຍ ເປີກສາກັນໃນ ເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງຕັດຊະນີຍະກຳແລ້ວ ກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ເອົາລະ ພວກເຮົາ ຈະລະງັບຕັດຊະນີຍະກຳ ແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍທຳປະຕິຣູປະລະງັບຕັດຊະນີຍະກຳ ແກ່ພິກຂຸອົງນັ້ນ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ “ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຣູປະ ກຳພ້ອມພຽງກັນໂດຍທຳປະຕິຣູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່”

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ “ກຳແບ່ງພວກກັນໂດຍທຳປະຕິຣູປະ” ແລະພວກທີ່ກ່າວແນວນີ້ວ່າ “ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່” ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

[໔໔໔] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງຕັດຊະນີຍະກຳແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ຖ້າພິກຂຸທັງຫຼາຍ ເປີກສາກັນໃນເລື້ອງນັ້ນແນວນີ້ວ່າ “ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງຕັດຊະນີຍະກຳແລ້ວ ກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບຕັດຊະນີຍະກຳ ເອົາລະ ພວກເຮົາ ຈະລະງັບຕັດຊະນີຍະກຳແກ່ພິກຂຸອົງນັ້ນ” ແລ້ວພ້ອມພຽງກັນໂດຍທຳປະຕິຣູປະລະງັບຕັດຊະນີຍະກຳແກ່ພິກຂຸອົງນັ້ນ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ “ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຣູປະ ກຳພ້ອມພຽງກັນໂດຍທຳປະຕິຣູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່”

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ “ກຳພ້ອມພຽງກັນໂດຍທຳປະຕິຣູປະ” ແລະພວກທີ່ກ່າວແນວນີ້ວ່າ “ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່” ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

## ໔໗໔. ນິຍະສະກຳມະປະຕິປັດສັດທິກະຖາ

## ວ່າດ້ວຍຄວາມຂັດແຍ່ງໃນການລະງັບນິຍະສະກຳ

[໔໔໕] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງຕັດຊະນີຍະກຳແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບນິຍະສະກຳ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ “ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງນິຍະສະກຳແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ຂໍລະງັບນິຍະສະກຳ ເອົາລະ ພວກເຮົາຈະລະງັບນິຍະສະກຳແກ່ພິກຂຸອົງນັ້ນ” ແລ້ວແບ່ງພວກໂດຍຖືກຕ້ອງຕາມທຳລະງັບນິຍະສະກຳແກ່ພິກຂຸອົງນັ້ນ ຯລຯ ຯລຯ ພ້ອມພຽງກັນໂດຍບໍ່ຊອບທຳ ຯລຯ ຯລຯ ແບ່ງພວກໂດຍຖືກຕ້ອງຕາມທຳ ຯລຯ ຯລຯ ແບ່ງພວກໂດຍທຳປະຕິຣູປະ ຯລຯ ຯລຯ ພ້ອມພຽງກັນໂດຍທຳປະຕິຣູປະ ຯລຯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຣູປະ ກຳພ້ອມພຽງກັນໂດຍທຳປະຕິຣູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຣູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

## ໔໖໕. ປັບພາຊະນີຍະກຳມະປະຕິປັດສັດທິກະຖາ
## ວ່າດ້ວຍຄວາມຂັດແຍ່ງໃນການລະງັບປັບພາຊະນີຍະກຳ

[໔໔໖] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງປັບພາຊະນີຍະກຳແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປັບພາຊະນີຍະກຳ ຖ້າພິກຂຸທັງຫຼາຍຕົກລົງກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງປັບພາຊະນີຍະກຳແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປັບພາຊະນີຍະກຳ ເອົາລະ ພວກເຮົາຈະລະງັບປັບພາຊະນີຍະກຳແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລະງັບປັບພາຊະນີຍະກຳແກ່ພິກຂຸອົງນັ້ນ ฯລฯ ฯລฯ ພ້ອມພຽງກັນໂດຍບໍ່ຊອບທຳ ฯລฯ ฯລฯ ແບ່ງພວກໂດຍຖືກຕ້ອງຕາມທຳ ฯລฯ ฯລฯ ແບ່ງພວກໂດຍທຳປະຕິຣູປະ ฯລฯ ฯລฯ ພ້ອມພຽງກັນໂດຍທຳປະຕິຣູປະ ฯລฯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຣູປະ ກຳພ້ອມພຽງກັນໂດຍທຳປະຕິຣູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຣູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

## ໔໖໖. ປະຕິສາຣະນີຍະກຳມະປະຕິປັດສັດທິກະຖາ
## ວ່າດ້ວຍຄວາມຂັດແຍ່ງໃນການລະງັບປະຕິສາຣະນີຍະກຳ

[໔໔໗] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງປະຕິສາຣະນີຍະກຳແລ້ວ

ກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປະຕິສາຣະນີຍະກຳ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງປະຕິສາຣະນີຍະກຳແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບປະຕິສາຣະນີຍະກຳ ເອົາລະ ພວກເຮົາຈະລະງັບປະຕິສາຣະນີຍະກຳແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລະງັບປະຕິສາຣະນີຍະກຳແກ່ພິກຂຸອົງນັ້ນ ຯລຯ ຯລຯ ພ້ອມພຽງກັນໂດຍບໍ່ຊອບທຳ ຯລຯ ຯລຯ ແບ່ງພວກໂດຍຖືກຕ້ອງຕາມທຳ ຯລຯ ຯລຯ ແບ່ງພວກໂດຍທຳປະຕິຣູປະ ຯລຯ ຯລຯ ພ້ອມພຽງກັນໂດຍທຳປະຕິຣູປະ ຯລຯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຣູປະ ກຳພ້ອມພຽງກັນໂດຍທຳປະຕິຣູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຣູປະ" ແລະພວກທີ່ກ່າວແນວນີ້ວ່າ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

## ໔໖໗. ອະທັດສະນະອຸກເຂປະນີຍະກຳມະປະຕິປັດສັດທິກະຖາ

## ວ່າດ້ວຍຄວາມຂັດແຍ່ງໃນການລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ

[໔໔໗] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ເອົາລະ ພວກເຮົາຈະລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລະງັບອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດແກ່ພິກຂຸອົງນັ້ນ ຯລຯ ຯລຯ ພ້ອມພຽງກັນໂດຍບໍ່ຊອບທຳ ຯລຯ ຯລຯ ແບ່ງພວກໂດຍຖືກຕ້ອງຕາມທຳ ຯລຯ ຯລຯ ແບ່ງພວກໂດຍທຳປະຕິຣູປະ ຯລຯ ຯລຯ ພ້ອມພຽງກັນໂດຍທຳປະຕິຣູປະ ຯລຯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຮູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

## ໘໖໙. ອັບປະຕິກຳມະອຸກເຂປະນີຍະກຳມະປະຕິປັດສັດທິກະຖາ

## ວ່າດ້ວຍຄວາມຂັດແຍ່ງໃນການລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ

[໔໔໙] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງອຸກເຂປະນີຍະກຳຍ້ອນ ບໍ່ເຮັດຄືນອາບັດແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະ ກຳຍ້ອນບໍ່ເຮັດຄືນອາບັດ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດ ເອົາລະ ພວກເຮົາ ຈະລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳລະງັບອຸກເຂປະນີຍະກຳຍ້ອນບໍ່ເຮັດຄືນອາບັດແກ່ພິກຂຸອົງນັ້ນ ฯລฯ ฯລฯ ພ້ອມພຽງກັນໂດຍບໍ່ຊອບທຳ ฯລฯ ฯລฯ ແບ່ງພວກໂດຍຖືກຕ້ອງຕາມທຳ ฯລฯ ฯລฯ ແບ່ງພວກໂດຍທຳປະຕິຮູປະ ฯລฯ ฯລฯ ພ້ອມພຽງກັນໂດຍທຳປະຕິຮູປະ ฯລฯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຮູປະ ກຳພ້ອມພຽງກັນໂດຍທຳປະຕິຮູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍ ທຳປະຕິຮູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

໕ ວາຣະນີ້ທ່ານຫຍໍ້ໄວ້

# ໔໖໙. ອັບປະຕິນິດສັກຄະອຸກເຂປະນີຍະກຳມະປະຕິປັດສັດທິກະຖາ

## ວ່າດ້ວຍຄວາມຂັດແຍ່ງໃນການລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ

[໔໕໐] ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ຖ້າພິກຂຸທັງຫຼາຍເປີກສາກັນໃນເລື້ອງນັ້ນແນວນີ້ວ່າ "ທ່ານທັງຫຼາຍ ພິກຂຸອົງນີ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແລ້ວກັບປະພຶດຖືກ ຫາຍຈອງຫອງ ກັບໂຕໄດ້ ຂໍລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບ ເອົາລະ ພວກເຮົາຈະລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸອົງນັ້ນ" ແລ້ວແບ່ງພວກໂດຍບໍ່ຊອບທຳ ລະງັບອຸກເຂປະນີຍະກຳຍ້ອນບໍ່ສະລະທິດຖິບາບແກ່ພິກຂຸອົງນັ້ນ ຯລຯ ຯລຯ ພ້ອມພຽງກັນໂດຍບໍ່ຊອບທຳ ຯລຯ ຯລຯ ແບ່ງພວກໂດຍຖືກຕ້ອງຕາມທຳ ຯລຯ ຯລຯ ແບ່ງພວກໂດຍທຳປະຕິຣູປະ ຯລຯ ຯລຯ ພ້ອມພຽງກັນໂດຍທຳປະຕິຣູປະ ຯລຯ

ສົງຜູ້ຢູ່ໃນບ່ອນປະຊຸມນັ້ນກ່າວແຍ້ງວ່າ "ກຳແບ່ງພວກໂດຍບໍ່ຊອບທຳ ກຳພ້ອມພຽງກັນໂດຍບໍ່ຊອບທຳ ກຳແບ່ງພວກໂດຍຖືກຕ້ອງຕາມທຳ ກຳແບ່ງພວກໂດຍທຳປະຕິຣູປະ ກຳພ້ອມພຽງກັນໂດຍທຳປະຕິຣູປະ ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່"

ບັນດາພິກຂຸໃນບ່ອນປະຊຸມນັ້ນ ພວກທີ່ກ່າວແນວນີ້ວ່າ "ກຳພ້ອມພຽງກັນໂດຍທຳປະຕິຣູປະ" ແລະພວກທີ່ກ່າວແນວນີ້ວ່າ "ກຳບໍ່ເປັນອັນເຮັດ ກຳເຮັດບໍ່ດີ ຕ້ອງເຮັດໃໝ່" ຈັດເປັນຝ່າຍທຳມະວາທີໃນບ່ອນປະຊຸມນັ້ນ

ແມ່ນ ໕ ວາຣະນີ້ທ່ານກໍຫຍໍ້ໄວ້

**ຈຳເປີຍຍະຂັນທະກະທີ ໙ ຈົບ**

# ໔໗໐. ລວມເລື້ອງທີ່ມີໃນຈຳເປີຍຍະຂັນທະກະ

## ຈຳເປີຍຍະຂັນທະກະ ມີ ໓໖ ເລື້ອງ ຄື

ເລື້ອງພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ນະຄອນຈຳປາ

ເລື້ອງພຣະກັດສະປະໂຄດໃນວາສະພະຄາມຂົນຂວາຍໃນສິ່ງທີ່ເພິ່ງປາຖະໜາເພື່ອພິກຂຸອາຄັນຕຸກະເມື່ອທ່ານຮູ້ວ່າພວກພິກຂຸອາຄັນຕຸກະຊ່ຽວຊານທາງໂຄຈອນດີແລ້ວຈຶ່ງເຊົາຂົນຂວາຍໃນເວລານັ້ນ ແຕ່ຖືກພິກຂຸອາຄັນຕຸກະລົງອຸກເຂປະນີຍະ ກຳຍ້ອນບໍ່ເຮັດຈຶ່ງໄປເຝົ້າພຣະຊິນນະເຈົ້າ

ເລື້ອງພິກຂຸຊາວນະຄອນຈຳປາເຮັດກຳແບ່ງພວກໂດຍບໍ່ຊອບທຳ ພ້ອມພຽງກັນໂດຍບໍ່ຊອບທຳ ເຮັດກຳແບ່ງພວກໂດຍຖືກຕ້ອງຕາມທຳ ແບ່ງພວກໂດຍທຳປະຕິຣູປະພ້ອມພຽງກັນໂດຍທຳປະຕິຣູປະ

ພິກຂຸອົງດຽວລົງອຸກເຂປະນີຍະກຳພິກຂຸອົງດຽວແດ່ ພິກຂຸອົງດຽວລົງອຸກເຂປະນີຍະກຳພິກຂຸ ໔ ອົງແດ່ ພິກຂຸອົງດຽວລົງອຸກເຂປະນີຍະກຳພິກຂຸຫຼາຍອົງແດ່ ພິກຂຸອົງດຽວລົງອຸກເຂປະນີຍະກຳສົງແດ່ ພິກຂຸ ໔ ອົງລົງອຸກເຂປະນີຍະ ກຳພິກຂຸອົງດຽວແດ່ ພິກຂຸ ໔ ອົງລົງອຸກເຂປະນີຍະກຳພິກຂຸ ໔ ອົງແດ່ ພິກຂຸ ໔ ອົງລົງອຸກເຂປະນີຍະກຳພິກຂຸຫຼາຍອົງແດ່

ພິກຂຸ ໔ ອົງລົງອຸກເຂປະນີຍະກຳສົງແດ່ ພິກຂຸຫຼາຍອົງ ລົງອຸກເຂປະນີຍະກຳພິກຂຸອົງດຽວແດ່ ພິກຂຸຫຼາຍອົງລົງອຸກເຂປະນີຍະ ກຳພິກຂຸ ໔ ອົງແດ່ ພິກຂຸຫຼາຍອົງລົງອຸກເຂປະນີຍະກຳ ພິກຂຸຫຼາຍອົງແດ່ ພິກຂຸຫຼາຍອົງລົງອຸກເຂປະນີຍະກຳສົງແດ່ ສົງລົງອຸກເຂປະນີຍະກຳສົງແດ່ ເລື້ອງພຣະຜູ້ມີພຣະພາກເຈົ້າໄດ້ ຊົງສະດັບແລ້ວຕັດຫ້າມຍ້ອນບໍ່ຊອບທຳ

ເລື້ອງກຳທີ່ຍັດຕິວິບັດ ອະນຸສາວະນາສົມບູນ ວິບັດໂດຍອະນຸສາວະນາ ສົມບູນດ້ວຍຍັດຕິ ວິບັດທັງສອງຢ່າງ ເຮັດກຳຜິດທຳວິໄນ ຜິດສັດຖຸສາດ ເຮັດກຳທີ່ຖືກຄັດຄ້ານກຳທີ່ກຳເຮີບ ບໍ່ຄວນແກ່ຖານະ

ເລື້ອງແບ່ງພວກໂດຍບໍ່ຊອບທຳ ພ້ອມພຽງກັນໂດຍບໍ່ຊອບທຳ ແບ່ງພວກໂດຍທຳປະຕິຣູປະ ພ້ອມພຽງກັນໂດຍທຳປະຕິຣູປະ ພຣະຕະຖາຄົດເຈົ້າຊົງອະນຸຍາດກຳທີ່ພ້ອມພຽງກັນໂດຍທຳທີ່ນັ້ນ

ເລື້ອງສົງ ໕ ປະເພດ ຄື ສົງຈະຕຸວັກ ສົງປັນຈະວັກ ສົງທະສະວັກ ສົງວິສະຕິວັກ ແລະສົງອະຕິເຣກະວິສະຕິວັກ

ເລື້ອງຍົກເວັ້ນອຸປະສົມບົດກຳ ປະວາຣະນາກຳແລະອັບພານກຳ ນອກນັ້ນສົງຈະຕຸວັກເຮັດໄດ້

ເລື້ອງຍົກເວັ້ນກຳ ໔ ຢ່າງ ຄື ອຸປະສົມບົດກຳໃນ ມັດຊິມະປະເທດແລະອັບພານກຳ ນອກນັ້ນສົງປັນຈະວັກເຮັດໄດ້ທັງໝົດ

ເລື້ອງຍົກເວັ້ນອັບພານກຳແນວດຽວ ນອກນັ້ນສົງທະສະວັກເຮັດໄດ້

ເລື້ອງສົງວິສະຕິວັກເຮັດກຳໄດ້ທຸກຢ່າງ

ເລື້ອງສະຫຼຸບຄົນ ໔໔ ຈຳພວກຄື ພິກຂຸນີ ສິກຂະມານາ ສາມະເນນ

ສາມະເນຣີ ພິກຂຸຜູ້ບອກລາສິກຂາຜູ້ຕ້ອງອັນຕິມະວັດຖຸ
ຜູ້ຖືກສົງລົງອຸກເຂປະນີຍະກຳຍ້ອນບໍ່ເຫັນອາບັດ
ຍ້ອນບໍ່ເຮັດຄືນອາບັດ ຍ້ອນບໍ່ສະລະທິດຖິບາບ
ບັນເດາະ ຄົນລັກເພດ ພິກຂຸຜູ້ເຂົ້າຮີດເດຍຣະຖີ ສັດເດຍຣັດສານ
ຄົນຜູ້ຂ້າມານດາ ຄົນຜູ້ຂ້າບິດາ ຄົນຂ້າພຣະອະຣະຫັນ
ຄົນປະທຸດສະຮ້າຍພິກຂຸນີ ຄົນທຳລາຍສົງ
ຄົນທຳຮ້າຍພຣະສາດສະດາຈົນເຖິງຫໍ້ພຣະໂລຫິດ ອຸພະໂຕພະຍັນຊະນະກະ
ພິກຂຸຜູ້ເປັນນານາສັງວາດ ພິກຂຸຜູ້ຢູ່ໃນນານາສີມາ ພິກຂຸຜູ້ຢູ່ໃນ
ອາກາດດ້ວຍລິດ

ສົງເຮັດກຳແກ່ພິກຂຸໃດມີພິກຂຸນັ້ນຄົບຈຳນວນສົງພໍດີ
ລວມ ໔໔ ຈຳພວກ ພຣະສຳມາສຳພຸດທະເຈົ້າຊົງຫ້າມໄວ້
ຍ້ອນຄົນພວກນັ້ນເປັນຄະນະປູຣະກະບໍ່ໄດ້

ເລື້ອງສົງມີພິກຂຸຜູ້ຢູ່ປະຣິວາດເປັນທີ ໔ ໃຫ້ປະຣິວາດ ດຶງເຂົ້າຫາອາບັດເດີມ
ໃຫ້ມານັດຫຼືອັບພານ ເປັນກຳທີ່ໃຊ້ບໍ່ໄດ້ແລະບໍ່ຄວນເຮັດ
ເລື້ອງສົງມີຜູ້ຄວນດຶງເຂົ້າຫາອາບັດເດີມເປັນທີ ໔ ສົງມີພິກຂຸ
ຜູ້ຄວນມານັດເປັນທີ ໔ ສົງມີພິກຂຸຜູ້ປະພຶດມານັດເປັນທີ ໔
ສົງມີພິກຂຸຜູ້ຄວນອັບພານເປັນທີ ໔ ສົງ ໕ ປະເພດນີ້
ພຣະສຳມາສຳພຸດທະເຈົ້າຊົງປະກາດວ່າເຮັດສັງຄະກຳໃຫ້ບໍ່ໄດ້

ເລື້ອງຄົນ ໔໗ ຈຳພວກຄື ພິກຂຸນີ ສິກຂະມານາ ສາມະເນນ
ສາມະເນຣີ ພິກຂຸຜູ້ບອກລາສິກຂາ ຜູ້ຕ້ອງອັນຕິມະວັດຖຸ ວິກົນຈະລິດ
ມີຈິດຟຸ້ງຊ່ານ ກະສັບກະສ່າຍຍ້ອນເວທະນາຖືກລົງອຸກເຂປະນີຍະກຳ
ຍ້ອນບໍ່ເຫັນວ່າເປັນອາບັດ ຍ້ອນບໍ່ເຮັດຄືນອາບັດ ຍ້ອນບໍ່ສະລະທິດຖິບາບ ບັນ
ເດາະຄົນລັກເພດ ພິກຂຸຜູ້ເຂົ້າຮີດເດຍຣະຖີ ສັດເດຍຣັດສານ
ຄົນຜູ້ຂ້າມານດາ ຄົນຜູ້ຂ້າບິດາ ຄົນຜູ້ຂ້າພຣະອະຣະຫັນ
ຄົນປະທຸດສະຮ້າຍພິກຂຸນີ ຄົນຜູ້ທຳລາຍສົງ
ຄົນທຳຮ້າຍພຣະສາດສະດາຈົນເຖິງຫໍ້ພຣະໂລຫິດ ອຸພະໂຕພະຍັນຊະນະກະ
ພິກຂຸຜູ້ຢູ່ໃນນານາສັງວາດ ພິກຂຸຜູ້ຢູ່ໃນນານາສີມາ ພິກຂຸຜູ້ຢູ່ໃນ
ອາກາດດ້ວຍລິດ ແລະພິກຂຸຜູ້ຖືກສົງເຮັດກຳ ໔໗ ຈຳພວກນີ້ຄ້ານບໍ່ຂຶ້ນ

ເລື້ອງຄຳຄັດຄ້ານຂອງພິກຂຸປະກະຕັດຕະຟັງຂຶ້ນ ເລື້ອງບຸກຄົນທີ່ຖືກຂັບ
ອອກໄປດີແລະບຸກຄົນທີ່ຖືກຂັບອອກໄປບໍ່ດີ

ເລື້ອງຄົນ ໑໑ ຈຳພວກ ຄື ບັນເດາະ ຄົນລັກເພດ ພິກຂຸ
ຜູ້ເຂົ້າຮີດເດຍຣະຖີ ສັດເດຍຣັດສານ ຄົນຜູ້ຂ້າມານດາ ຄົນຜູ້ຂ້າບິດາ
ຄົນຜູ້ຂ້າພຣະອະຣະຫັນ ຄົນປະທຸດສະຮ້າຍພິກຂຸນີ ຄົນຜູ້ທຳລາຍສົງ
ຄົນທຳຮ້າຍພຣະສາດສະດາຈົນເຖິງຫໍ້ພຣະໂລຫິດ ອຸພະໂຕພະຍັນຊະນະກະ
ຄົນ ໑໑ ຈຳພວກນີ້ບໍ່ຄວນຮັບເຂົ້າໝູ່

ເລື້ອງຄົນ ໓໔ ຈຳພວກ ຄື ຄົນມືກຸດ ຕີນກຸດ ທັງມື
ທັງຕີນກຸດ ຄົນຫູວິ່ນ ຄົນດັງແຫວ່ງ ຄົນທັງຫູວິ່ນທັງດັງແຫວ່ງ
ຄົນນິ້ວມືນິ້ວຕີນຂາດ ຄົນມືງ່າມມືງ່າມຕີນຂາດ ຄົນເອັນຂາດ
ຄົນມືເປັນແຜ່ນ ຄົນຄ່ອມ ຄົນເຕ້ຍ ຄົນຄໍພອກ ຄົນຖືກສັກໝາຍໂທດ
ມີຮອຍຂ້ຽນດ້ວຍຫວາຍ ຄົນມີໝາຍຈັບ ຄົນຕີນປຸກ
ຄົນມີພະຍາດຊຳເຮື້ອ ຄົນມີຮູບຮ່າງບໍ່ສົມປະກອບ
ຄົນຕາບອດຂ້າງດຽວ ຄົນເປັ້ຍ ຄົນງ່ອຍ ຄົນເປັນໂຣກອຳມະພາດ
ຄົນເຄື່ອນໄຫວເອງບໍ່ໄດ້ ຄົນຊະຣາທຸບພົນລະພາພ ຄົນຕາບອດທັງສອງຂ້າງ
ຄົນກືກ ຄົນຫູໜວກ ຄົນທັງບອດທັງກືກ ຄົນທັງບອດທັງໜວກ
ຄົນທັງກືກທັງໜວກ ຄົນທັງບອດ ທັງກືກ ທັງໜວກ ໓໔ ຈຳພວກນີ້
ພຣະສຳມາສຳພຸດທະເຈົ້າຊົງປະກາດວ່າຮັບເຂົ້າໝູ່ໄດ້

ເລື້ອງການລົງອຸກເຂປະນີຍະກຳພິກຂຸຜູ້ບໍ່ເຫັນວ່າເປັນອາບັດ
ການລົງອຸກເຂປະນີຍະກຳພິກຂຸຜູ້ບໍ່ເຮັດຄືນອາບັດ ການລົງອຸກເຂປະນີຍະກຳ
ພິກຂຸບໍ່ສະລະທິດຖິບາບ ໆ ກໍລະນີ ເປັນກຳບໍ່ຊອບທຳ

ເລື້ອງການລົງອຸກເຂປະນີຍະກຳພິກຂຸທີ່ຕ້ອງອາບັດບໍ່ຊອບທຳອີກ
ໆ ກໍລະນີ ເລື້ອງການລົງອຸກເຂປະນີຍະກຳພິກຂຸທີ່ຊອບທຳ ໆ ກໍລະນີ

ເລື້ອງກຳທີ່ຄວນເຮັດຕໍ່ໜ້າກັບເຮັດລັບຫຼັງ ກຳທີ່ຄວນເຮັດ
ໂດຍການສອບຖາມກັບບໍ່ຊັກຖາມ ກຳທີ່ຄວນເຮັດຕາມປະຕິຍານ
ກັບເຮັດໂດຍບໍ່ປະຕິຍານ ໃຫ້ອະມູລະຫະວິໄນແກ່ພິກຂຸຜູ້ຄວນສະຕິວິໄນ
ເຮັດຕັດສະປາປີຍະສີກາກຳແກ່ພິກຂຸຜູ້ຄວນອະມູລະຫະວິໄນ

ລົງຕັດຊະນີຍະກຳແກ່ພິກຂຸຜູ້ຄວນຕັດສະປາປີຍະສີກາກຳ ລົງນິຍະສະກຳ
ແກ່ພິກຂຸຜູ້ຄວນຕັດຊະນີຍະກຳ ລົງປັບພາຊະນີຍະກຳແກ່ພິກຂຸຜູ້ຄວນນິຍະສະກຳ
ລົງປະຕິສາຣະນີຍະກຳແກ່ພິກຂຸຜູ້ຄວນປັບພາຊະນີຍະກຳ
ລົງອຸກເຂປະນີຍະກຳແກ່ພິກຂຸຜູ້ຄວນປະຕິສາຣະນີຍະກຳ ໃຫ້ປະຣິວາດແກ່ພິກຂຸ

ຜູ້ຄວນອຸກເຂປະນິຍະກຳ ດຶງພິກຂຸຜູ້ຄວນປະຣິວາດເຂົ້າຫາອາບັດເດີມ
ໃຫ້ມານັດແກ່ພິກຂຸຜູ້ຄວນດຶງເຂົ້າຫາອາບັດເດີມ ອັບພານພິກຂຸຜູ້ຄວນມານັດ
ໃຫ້ພິກຂຸຜູ້ຄວນອັບພານໃຫ້ອຸປະສົມບົດກຸນລະບຸດ

ເຮັດກຳແນວໜຶ່ງແກ່ພິກຂຸຜູ້ຄວນກຳແນວໜຶ່ງ ລວມ ໑໖
ກໍລະນີເປັນກຳທີ່ບໍ່ຊອບດ້ວຍທຳ ບໍ່ຊອບດ້ວຍວິໄນ

ເລື້ອງເຮັດກຳນັ້ນ ໆ ແກ່ພິກຂຸຜູ້ຄວນແກ່ກຳນັ້ນ ໆ ລວມ
໑໖ ກໍລະນີ ເປັນກຳທີ່ຊອບດ້ວຍທຳຊອບດ້ວຍວິໄນ ເລື້ອງເຮັດກຳ
ແຕ່ລະຢ່າງບໍ່ຊອບດ້ວຍທຳ ບໍ່ຊອບດ້ວຍວິໄນ ໑໖ ກໍລະນີ ໔ ໝວດ ເລື້ອງເຮັດກຳ
ທີ່ຊອບດ້ວຍທຳ ຊອບດ້ວຍວິໄນ ໑໖ ກໍລະນີ ໔ ໝວດ
ເລື້ອງໝຸນວຽນກຳມີກຳແຕ່ລະຂໍ້ເປັນມູນ ພຣະຊິນນະເຈົ້າຕັດວ່າ
ບໍ່ຊອບດ້ວຍທຳ ເລື້ອງສົງແບ່ງພວກໂດຍບໍ່ຊອບທຳລົງຕັດຊະນີຍະ
ກຳແກ່ພິກຂຸຜູ້ກໍ່ຄວາມໝາງໃຈ

ເລື້ອງພິກຂຸໃນອາວາດອື່ນພ້ອມພຽງກັນໂດຍບໍ່ຊອບທຳລົງ
ຕັດຊະນີຍະກຳ ແລະພິກຂຸໃນອາວາດອື່ນແບ່ງພວກໂດຍຖືກຕ້ອງຕາມທຳກໍມີ
ແບ່ງພວກໂດຍທຳປະຕິຣູປະກໍມີ ພ້ອມພຽງກັນໂດຍທຳປະຕິຣູປະກໍມີ
ລົງຕັດຊະນີຍະກຳເລື້ອງພ້ອມພຽງກັນໂດຍບໍ່ຊອບທຳ ແບ່ງພວກ
ໂດຍຖືກຕ້ອງຕາມທຳ ແບ່ງພວກໂດຍທຳປະຕິຣູປະ ແລະພ້ອມພຽງກັນ
ໂດຍທຳປະຕິຣູປະ

ນັກປາດຜູ້ມີປັນຍາເພິ່ງຈັດແຕ່ລະຂໍ້ເປັນມູນໝຸນວຽນ
ເລື້ອງສົງລົງນິຍະສະກຳແກ່ພິກຂຸຜູ້ໂງ່ຈ້າບໍ່ສະຫຼາດ
ເລື້ອງສົງລົງປັບພາຊະນີຍະກຳແກ່ພິກຂຸຜູ້ປະທຸດສະຮ້າຍຕະກູນ
ເລື້ອງສົງເຮັດປະຕິສາຣະນີຍະກຳແກ່ພິກຂຸຜູ້ດ່າກ່າວໂທດຄະລືຫັດ

ເລື້ອງພຣະຜູ້ມີພຣະພາກເຈົ້າຊົງເປັນຜູ້ນຳໝູ່ຕັດອຸກເຂປະນີຍະກຳ
ແກ່ພິກຂຸຜູ້ບໍ່ເຫັນອາບັດ ບໍ່ເຮັດຄືນອາບັດ ແລະບໍ່ສະລະທິດຖິບາບ

ເລື້ອງການລະງັບຕັດຊະນີຍະກຳເປັນຕົ້ນແກ່ພິກຂຸຜູ້ກັບໂຕໄດ້
ພິກຂຸຜູ້ມີປັນຍາເພິ່ງລົງຕັດຊະນີຍະກຳໃຫ້ຖືກຕ້ອງຕາມວິໄນ
ພິກຂຸຜູ້ປະພຶດຮຽບຮ້ອຍອະນຸວັດປະຕິບັດຕາມລະບຽບວິໄນເຫຼົ່ານັ້ນ
ຂໍລະງັບກຳເຫຼົ່ານັ້ນຕາມໄນແຫ່ງກຳທີ່ກ່າວໄວ້ກ່ອນ

ເລື້ອງໃນກຳນັ້ນ ໆ ສົງຜູ້ຢູ່ໃນບ່ອນປະຊຸມຄັດຄ້ານວ່າ

ກໍາບໍ່ເປັນອັນເຮັດ ກໍາເຮັດບໍ່ຖືກ ຕ້ອງເຮັດໃໝ່ ແລະເມື່ອກໍາລະງັບ
ພິກຂຸເຫຼົ່ານັ້ນເປັນທໍາມະວາທີ

ພຣະມະຫາມຸນີຊົງເຫັນພິກຂຸພວກເຂົ້າກໍາໄດ້ຮັບຄວາມລໍາບາກ
ໂດຍກໍາວິບັດຈຶ່ງຊົງຊີ້ວິທີລະງັບໄວ້ ຄືນາຍແພດຜູ້ຊ່ຽວຊານໄດ້
ບອກໂຕຢາໄວ້ສັນນັ້ນ

**ຈໍາເປີຍຍະຂັນທະກະ ຈົບ**

# ໑໐. ໂກສໍາພິກະຂັນທະກະ

## ໔໗໑. ໂກສໍາພິກະວິວາທະກະຖາ

### ວ່າດ້ວຍເລື້ອງພິກຂຸຊາວນະຄອນໂກສໍາພີຜິດຖຽງ ວິວາດກັນ

[໔໕໑] ສະໄໝນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ໂຄສິຕາຣາມ ເຂດນະຄອນໂກສໍາພີ ຄັ້ງນັ້ນມີພິກຂຸອົງໜຶ່ງຕ້ອງອາບັດ ພິກຂຸອົງນັ້ນມີຄວາມເຫັນໃນອາບັດນັ້ນວ່າເປັນອາບັດ ແຕ່ພິກຂຸພວກອື່ນມີຄວາມເຫັນໃນອາບັດນັ້ນວ່າບໍ່ເປັນອາບັດ

ຕໍ່ມາ ພິກຂຸອົງນັ້ນກັບມີຄວາມເຫັນໃນອາບັດນັ້ນວ່າບໍ່ເປັນອາບັດ ແຕ່ພິກຂຸພວກອື່ນມີຄວາມເຫັນໃນອາບັດນັ້ນວ່າເປັນອາບັດ

ລໍາດັບນັ້ນ ພິກຂຸເຫຼົ່ານັ້ນໄດ້ກ່າວກັບພິກຂຸອົງນັ້ນດັ່ງນີ້ວ່າ "ທ່ານ ທ່ານຕ້ອງອາບັດແລ້ວ ທ່ານຈົ່ງເຫັນອາບັດນັ້ນ" ພິກຂຸອົງນັ້ນກ່າວວ່າ "ທ່ານທັງຫຼາຍ ຂ້ານ້ອຍບໍ່ມີອາບັດທີ່ຈະເພິ່ງເຫັນ"

ພາຍຫຼັງ ພິກຂຸເຫຼົ່ານັ້ນໄດ້ຄວາມພ້ອມພຽງແລ້ວຈຶ່ງລົງອຸກເຂປະນີຍະກໍາພິກຂຸອົງນັ້ນຍ້ອນບໍ່ເຫັນວ່າເປັນອາບັດ

ກໍພິກຂຸອົງນັ້ນເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທໍາ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ

ຕໍ່ມາ ພິກຂຸອົງນັ້ນເຂົ້າໄປຫາພວກພິກຂຸທີ່ເປັນເພື່ອນເຫັນເພື່ອນຄົບກັນມາແລ້ວໄດ້ກ່າວແນວນີ້ວ່າ "ທ່ານທັງຫຼາຍ ນັ້ນບໍ່ເປັນອາບັດ ນັ້ນບໍ່ແມ່ນເປັນອາບັດ ຂ້ານ້ອຍບໍ່ຕ້ອງອາບັດ ຂ້ານ້ອຍຕ້ອງອາບັດເປັນໄປບໍ່ໄດ້ ຂ້ານ້ອຍບໍ່ຖືກລົງອຸກເຂປະນີຍະກໍາ ຂ້ານ້ອຍຖືກລົງອຸກເຂປະນີຍະກໍາເປັນໄປບໍ່ໄດ້ ແຕ່ຖືກລົງອຸກເຂປະນີຍະກໍາດ້ວຍກໍາທີ່ບໍ່ຖືກຕ້ອງຕາມທໍາ ເປັນຄວາມເສຍຫາຍ ບໍ່ຄວນແກ່ຖານະ ທ່ານທັງຫຼາຍຈົ່ງເປັນຝ່າຍຂ້ານ້ອຍໂດຍທໍາໂດຍວິໄນເທີ້ນ"

ພິກຂຸອົງນັ້ນໄດ້ພວກພິກຂຸທີ່ເປັນເພື່ອນເຄີຍເຫັນເຄີຍຄົບກັນມາເປັນໝູ່ກອງແລ້ວ ພິກຂຸອົງນັ້ນໄດ້ສົ່ງທູດໄປໃນສຳນັກຂອງພວກພິກຂຸຊາວຊົນນະບົດທີ່ເປັນເພື່ອນເຫັນເພື່ອນຄົບກັນມາວ່າ "ທ່ານທັງຫຼາຍ ນັ້ນບໍ່ເປັນອາບັດ ນັ້ນເປັນອາບັດເປັນໄປບໍ່ໄດ້ ຂ້ານ້ອຍບໍ່ຕ້ອງອາບັດຂ້ານ້ອຍຕ້ອງອາບັດເປັນໄປບໍ່ໄດ້ ຂ້ານ້ອຍບໍ່ຖືກລົງອຸກເຂປະນີຍະກຳ ຂ້ານ້ອຍຖືກລົງອຸກເຂປະນີຍະກຳເປັນໄປບໍ່ໄດ້ ແຕ່ຖືກລົງອຸກເຂປະນີຍະກຳດ້ວຍກຳທີ່ບໍ່ຖືກຕ້ອງຕາມທຳ ເປັນຄວາມເສຍຫາຍ ບໍ່ຄວນແກ່ຖານະ ທ່ານທັງຫຼາຍຈົ່ງເປັນຝ່າຍຂ້ານ້ອຍໂດຍທຳໂດຍວິໄນເທີ້ນ"

ພິກຂຸອົງນັ້ນ ໄດ້ພວກພິກຂຸຊາວຊົນນະບົດທີ່ເປັນເພື່ອນ ເຄີຍເຫັນ ເຄີຍຄົບກັນມາເປັນໝູ່ກອງ

ຄັ້ງນັ້ນ ພິກຂຸເຫຼົ່ານັ້ນຜູ້ປະພຶດຕາມພິກຂຸທີ່ຖືກລົງອຸກເຂປະນີຍະກຳ ໄດ້ເຂົ້າໄປຫາພວກພິກຂຸທີ່ລົງອຸກເຂປະນີຍະກຳຮອດບ່ອນຢູ່ແລ້ວໄດ້ກ່າວດັ່ງນີ້ວ່າ "ທ່ານທັງຫຼາຍ ນັ້ນບໍ່ເປັນອາບັດນັ້ນເປັນອາບັດເປັນໄປບໍ່ໄດ້ ພິກຂຸອົງນັ້ນບໍ່ຕ້ອງອາບັດ ພິກຂຸອົງນັ້ນຕ້ອງອາບັດ ເປັນໄປບໍ່ໄດ້ພິກຂຸອົງນັ້ນບໍ່ຖືກລົງອຸກເຂປະນີຍະກຳ ພິກຂຸອົງນັ້ນຖືກລົງອຸກເຂປະນີຍະກຳເປັນໄປບໍ່ໄດ້ ແຕ່ຖືກລົງອຸກເຂປະນີຍະກຳດ້ວຍກຳທີ່ບໍ່ຖືກຕ້ອງຕາມທຳ ເປັນຄວາມເສຍຫາຍ ບໍ່ຄວນແກ່ຖານະ"

ເມື່ອພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳກ່າວແນວນີ້ແລ້ວ ພວກພິກຂຸຜູ້ລົງອຸກເຂປະນີຍະກຳຈຶ່ງກ່າວດັ່ງນີ້ວ່າ "ທ່ານທັງຫຼາຍ ນັ້ນເປັນອາບັດ ນັ້ນບໍ່ເປັນອາບັດເປັນໄປບໍ່ໄດ້ ພິກຂຸອົງນັ້ນຕ້ອງອາບັດແລ້ວ ພິກຂຸອົງນັ້ນບໍ່ຕ້ອງອາບັດເປັນໄປບໍ່ໄດ້ ພິກຂຸອົງນັ້ນຖືກລົງອຸກເຂປະນີຍະກຳແລ້ວ ພິກຂຸອົງນັ້ນບໍ່ຖືກລົງອຸກເຂປະນີຍະກຳເປັນໄປບໍ່ໄດ້ ທ່ານຖືກລົງອຸກເຂປະນີຍະກຳດ້ວຍກຳທີ່ຊອບທຳ ບໍ່ເປັນຄວາມເສຍຫາຍ ຄວນແກ່ຖານະ ທ່ານທັງຫຼາຍຢ່າປະພຶດຕາມ ຢ່າຫ້ອມລ້ອມພິກຂຸອົງນັ້ນຜູ້ຖືກລົງອຸກເຂປະນີຍະກຳນັ້ນ"

ພວກພິກຂຸຜູ້ປະພຶດຕາມພິກຂຸຖືກລົງອຸກເຂປະນີຍະກຳເຫຼົ່ານັ້ນ ແມ່ນຖືກພວກພິກຂຸຜູ້ລົງອຸກເຂປະນີຍະກຳວ່າກ່າວແນວນີ້ ກໍຍັງປະພຶດຕາມ ຍັງຫ້ອມລ້ອມພິກຂຸຜູ້ຖືກລົງອຸກເຂປະນີຍະກຳນັ້ນຄືເກົ່າ

[໔໕໔] ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງລົງທີ່ສົມຄວນ ພິກຂຸອົງນັ້ນຜູ້ນັ່ງທີ່ສົມຄວນແລ້ວໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈເລີນ ຂໍປະທານພຣະອະໄຣກາດ ພິກຂຸອົງໜຶ່ງໃນພຣະທຳວິໄນນີ້ຕ້ອງອາບັດແລ້ວ ມີຄວາມເຫັນໃນອາບັດນັ້ນວ່າເປັນອາບັດ ພວກພິກຂຸອື່ນມີຄວາມເຫັນໃນອາບັດນັ້ນວ່າບໍ່ເປັນອາບັດ ຕໍ່ມາພິກຂຸອົງນັ້ນກັບມີຄວາມເຫັນໃນອາບັດນັ້ນວ່າບໍ່ເປັນອາບັດ ພວກພິກຂຸອື່ນມີຄວາມເຫັນໃນອາບັດນັ້ນວ່າເປັນອາບັດ

ຂ້າແຕ່ ພຣະອົງຜູ້ຈເລີນ ລຳດັບນັ້ນ ພິກຂຸເຫຼົ່ານັ້ນໄດ້ກ່າວກັບພິກຂຸອົງນັ້ນດັ່ງນີ້ວ່າ ທ່ານ ທ່ານຕ້ອງອາບັດແລ້ວ ທ່ານຈົ່ງເຫັນອາບັດນັ້ນ

ພິກຂຸອົງນັ້ນກ່າວວ່າ ທ່ານທັງຫຼາຍ ຂ້ານ້ອຍບໍ່ມີອາບັດທີ່ຈະເພິ່ງເຫັນຂ້ານ້ອຍ ພາຍຫຼັງ ພິກຂຸເຫຼົ່ານັ້ນໄດ້ຄວາມພ້ອມພຽງແລ້ວຈຶ່ງລົງອຸກເຂປະນີຍະກຳພິກຂຸອົງນັ້ນຍ້ອນບໍ່ເຫັນອາບັດ

ຂ້າແຕ່ ພຣະອົງຜູ້ຈເລີນ ກໍ ພິກຂຸອົງນັ້ນເປັນພະຫູສູດ ຊ່ຽວຊານປະຣິຍັດ ຊົງທຳ ຊົງວິໄນ ຊົງມາຕິກາ ເປັນບັນດິດ ສະຫຼຽວສະຫຼາດ ມີປັນຍາ ມີຄວາມລະອາຍ ມີຄວາມລະມັດລະວັງ ໃຝ່ການສຶກສາ ຕໍ່ມາ ພິກຂຸອົງນັ້ນໄດ້ເຂົ້າໄປຫາພວກພິກຂຸທີ່ເປັນເພື່ອນເຫັນເພື່ອນຄົບກັນມາ ແລ້ວໄດ້ກ່າວດັ່ງນີ້ວ່າ ທ່ານທັງຫຼາຍ ນັ້ນບໍ່ເປັນອາບັດ ນັ້ນເປັນອາບັດເປັນໄປບໍ່ໄດ້ ຂ້ານ້ອຍບໍ່ຕ້ອງອາບັດ ຂ້ານ້ອຍຕ້ອງອາບັດເປັນໄປບໍ່ໄດ້ ຂ້ານ້ອຍບໍ່ຖືກລົງອຸກເຂປະນີຍະກຳ ຂ້ານ້ອຍຖືກລົງອຸກເຂປະນີຍະ ກຳເປັນໄປບໍ່ໄດ້ ແຕ່ຖືກລົງອຸກເຂປະນີຍະກຳດ້ວຍກຳທີ່ບໍ່ຖືກຕ້ອງຕາມທຳ ບໍ່ຄວນແກ່ຖານະ ທ່ານທັງຫຼາຍຈົ່ງເປັນຝ່າຍຂ້ານ້ອຍໂດຍທຳໂດຍວິໄນເທີ້ນ

ຂ້າແຕ່ ພຣະອົງຜູ້ຈເລີນ ພິກຂຸອົງນັ້ນໄດ້ພວກພິກຂຸທີ່ເປັນເພື່ອນເຄີຍເຫັນເຄີຍຄົບກັນມາເປັນໝູ່ກອງແລ້ວ ພິກຂຸອົງນັ້ນໄດ້ສົ່ງທູດໄປໃນສຳນັກຂອງພວກພິກຂຸຊາວຊົນນະບົດທີ່ເປັນເພື່ອນເຄີຍເຫັນເຄີຍຄົບກັນມາວ່າ "ທ່ານທັງຫຼາຍ ນັ້ນບໍ່ເປັນອາບັດ ນັ້ນເປັນອາບັດເປັນໄປບໍ່ໄດ້ ຂ້ານ້ອຍບໍ່ຕ້ອງອາບັດ ຂ້ານ້ອຍຕ້ອງອາບັດເປັນໄປບໍ່ໄດ້ ຂ້ານ້ອຍບໍ່ຖືກລົງອຸກເຂປະນີຍະກຳ ຂ້ານ້ອຍຖືກລົງອຸກເຂປະນີຍະກຳເປັນໄປບໍ່ໄດ້ ແຕ່ຖືກລົງອຸກເຂປະນີຍະກຳດ້ວຍກຳທີ່ບໍ່ຖືກຕ້ອງຕາມທຳ ບໍ່ຄວນແກ່ຖານະ ທ່ານທັງຫຼາຍຈົ່ງເປັນຝ່າຍຂ້ານ້ອຍໂດຍທຳໂດຍວິໄນເທີ້ນ"

ພິກຂຸອົງນັ້ນໄດ້ພວກພິກຂຸທີ່ເປັນເພື່ອນເຄີຍເຫັນເຄີຍຄົບກັນມາເປັນໝູ່ກອງແລ້ວ

ຂ້າແຕ່ ພຣະອົງຜູ້ຈເລີນ ຄັ້ງນັ້ນ ພິກຂຸເຫຼົ່ານັ້ນຜູ້ປະພຶດຕາມພິກຂຸທີ່ຖືກລົງອຸກເຂປະນີຍະກຳ ໄດ້ເຂົ້າໄປຫາພວກພິກຂຸທີ່ລົງອຸກເຂປະນີຍະກຳຮອດບ່ອນຢູ່ແລ້ວໄດ້ກ່າວດັ່ງນີ້ວ່າ ທ່ານທັງຫຼາຍ ນັ້ນບໍ່ເປັນອາບັດ ນັ້ນບໍ່ແມ່ນເປັນອາບັດ ພິກຂຸອົງນັ້ນບໍ່ຕ້ອງອາບັດ ພິກຂຸອົງນັ້ນຕ້ອງອາບັດເປັນໄປບໍ່ໄດ້ ພິກຂຸອົງນັ້ນບໍ່ຖືກລົງອຸກເຂປະນີຍະກຳ ພິກຂຸອົງນັ້ນຖືກລົງອຸກເຂປະນີຍະກຳເປັນໄປບໍ່ໄດ້ ແຕ່ຖືກລົງອຸກເຂປະນີຍະກຳດ້ວຍກຳທີ່ບໍ່ຖືກຕ້ອງຕາມທຳ ບໍ່ຄວນແກ່ຖານະ

ຂ້າແຕ່ ພຣະອົງຜູ້ຈເລີນ ເມື່ອພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳກ່າວແນວນີ້ແລ້ວ ພວກພິກຂຸຜູ້ລົງອຸກເຂປະນີຍະກຳຈຶ່ງກ່າວດັ່ງນີ້ວ່າ ທ່ານທັງຫຼາຍ ນັ້ນ ເປັນອາບັດ ນັ້ນບໍ່ເປັນອາບັດເປັນໄປບໍ່ໄດ້ ພິກຂຸອົງນັ້ນຕ້ອງອາບັດແລ້ວ ພິກຂຸອົງນັ້ນບໍ່ຕ້ອງອາບັດເປັນໄປບໍ່ໄດ້ ພິກຂຸອົງນັ້ນຖືກລົງອຸກເຂປະນີຍະກຳແລ້ວ ພິກຂຸອົງນັ້ນບໍ່ຖືກລົງອຸກເຂປະນີຍະກຳເປັນ

ໄປບໍ່ໄດ້ ທ່ານຖືກລົງອຸກເຂປະນີຍະກຳດ້ວຍກຳທີ່ຊອບທຳ ຄວນແກ່ຖານະ ທ່ານທັງຫຼາຍຢ່າ ປະພຶດຕາມ ຢ່າຫ້ອມລ້ອມພິກຂຸຜູ້ຖືກລົງອຸກເຂປະນີຍະກຳນັ້ນ

ຂ້າແຕ່ ພຣະອົງຜູ້ຈເລີນ ພວກພິກຂຸຜູ້ປະພຶດຕາມພິກຂຸຖືກລົງອຸກເຂປະນີຍະກຳເຫຼົ່ານັ້ນ ແມ່ນອັນພວກພິກຂຸຜູ້ລົງອຸກເຂປະນີຍະກຳວ່າກ່າວແນວນີ້ ກໍຍັງປະພຶດຕາມ ຍັງຫ້ອມລ້ອມ ພິກ ຂຸຜູ້ຖືກລົງອຸກເຂປະນີຍະກຳນັ້ນຄືເກົ່າ"

[໔໕໓] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ວ່າ "ພິກຂຸສົງຈະແຕກກັນ ພິກຂຸສົງຈະ ແຕກກັນ"[๑] ສະເດັດລຸກຈາກອາສະນະ ເຂົ້າໄປຫາພວກພິກຂຸຜູ້ລົງອຸກເຂປະນີຍະກຳ ປະທັບນັ່ງ ເທິງພຣະພຸດທະອາດທີ່ຈັດໄວ້ ແລ້ວໄດ້ຕັດກັບພິກຂຸຜູ້ລົງອຸກເຂປະນີຍະກຳເຫຼົ່ານັ້ນດັ່ງນີ້ວ່າ "ພິກ ຂຸທັງຫຼາຍ ພວກທ່ານຢ່າຄິດແນວນີ້ວ່າ ເລື້ອງນີ້ແຈ່ມແຈ້ງແກ່ພວກເຮົາ ເລື້ອງນີ້ແຈ່ມແຈ້ງແກ່ ພວກເຮົາ ແລ້ວຈ້ອງແຕ່ຈະລົງອຸກເຂປະນີຍະກຳພິກຂຸໃນເລື້ອງໃດ ເລື້ອງໜຶ່ງ

ພິກຂຸທັງຫຼາຍ ກໍໃນກໍລະນີນີ້ ພິກຂຸຜູ້ຕ້ອງອາບັດແລ້ວ ມີຄວາມເຫັນໃນອາບັດນັ້ນວ່າບໍ່ ເປັນອາບັດ ພວກພິກຂຸອື່ນມີຄວາມເຫັນໃນອາບັດນັ້ນວ່າເປັນອາບັດ ພິກຂຸທັງຫຼາຍ

ຖ້າພິກຂຸເຫຼົ່ານັ້ນຮູ້ຈັກພິກຂຸອົງນັ້ນແນວນີ້ວ່າ ທ່ານອົງນີ້ແລເປັນພະຫູສູດ ຯລຯ ໃຝ່ການ ສຶກສາ ຖ້າພວກເຮົາຈະລົງອຸກເຂປະນີຍະກຳພິກຂຸອົງນີ້ຍ້ອນບໍ່ເຫັນອາບັດ ພວກເຮົາກໍຈະເຮັດອຸ ໂປສົດຮ່ວມກັບພິກຂຸອົງນີ້ບໍ່ໄດ້ ຕ້ອງເຮັດອຸໂປສົດແຍກຈາກພິກຂຸອົງນີ້ ຄວາມໝາງໃຈ ຄວາມ ຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມ ແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນເຊິ່ງມີເລື້ອງນັ້ນເປັນເຫດຈະມີແກ່ສົງ ພິກຂຸ ທັງຫຼາຍ ພວກພິກຂຸຜູ້ໜັກໃນຄວາມແຕກກັນ ບໍ່ເພິ່ງລົງອຸກເຂປະນີຍະກຳພິກຂຸອົງນັ້ນຍ້ອນບໍ່ ເຫັນອາບັດ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີນີ້ ພິກຂຸຜູ້ຕ້ອງອາບັດແລ້ວ ມີຄວາມເຫັນໃນອາບັດນັ້ນ ວ່າບໍ່ເປັນອາບັດ ພວກພິກຂຸອື່ນມີຄວາມເຫັນໃນອາບັດນັ້ນວ່າເປັນອາບັດ ຖ້າພິກຂຸເຫຼົ່ານັ້ນຮູ້ຈັກ ພິກຂຸອົງນັ້ນແນວນີ້ວ່າ ທ່ານອົງນີ້ເປັນພະຫູສູດ ຯລຯ ໃຝ່ການສຶກສາ ຖ້າພວກເຮົາຈະລົງອຸກເຂ ປະນີຍະກຳພິກຂຸອົງນີ້ຍ້ອນບໍ່ເຫັນອາບັດ ພວກເຮົາກໍຈະປະວາຣະນາຮ່ວມກັບພິກຂຸອົງນີ້ບໍ່ໄດ້ ຕ້ອງປະວາຣະນາແຍກຈາກພິກຂຸອົງນີ້ ຈະເຮັດສັງຄະກຳຮ່ວມກັບພິກຂຸອົງນີ້ບໍ່ໄດ້ ຕ້ອງເຮັດສັງ ຄະກຳແຍກຈາກພິກຂຸອົງນີ້ ຈະນັ່ງຮ່ວມເທິງອາສະນະດຽວກັບພິກຂຸອົງນີ້ບໍ່ໄດ້ ຕ້ອງນັ່ງເທິງອາ ສະນະແຍກຈາກພິກຂຸອົງນີ້ ຈະນັ່ງໃນບ່ອນດື່ມເຂົ້າຕົ້ມຮ່ວມກັບພິກຂຸອົງນີ້ບໍ່ໄດ້ ຕ້ອງນັ່ງແຍກ ຈາກພິກຂຸອົງນີ້ ຈະນັ່ງໃນໂຮງອາຫານຮ່ວມກັບພິກຂຸອົງນີ້ບໍ່ໄດ້ ຕ້ອງນັ່ງແຍກຈາກພິກຂຸອົງນີ້ ຈະຢູ່ໃນບ່ອນມຸງບັງດຽວກັນຮ່ວມກັບພິກຂຸອົງນີ້ບໍ່ໄດ້ ຕ້ອງຢູ່ແຍກຈາກພິກຂຸອົງນີ້ ຈະຂາບໄຫວ້ ຕ້ອນຮັບ ປະນົມມື ເຮັດສາມີຈິກຳຕາມລຳດັບພັນສາຮ່ວມກັບພິກຂຸອົງນີ້ບໍ່ໄດ້ ຕ້ອງເຮັດແຍກຈາກ

ພິກຂຸອົງນີ້ ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນເຊິ່ງມີເລື້ອງນັ້ນເປັນເຫດຈະມີແກ່ສົງ ພິກຂຸທັງຫຼາຍ ພວກພິກຂຸຜູ້ໜັກໃນຄວາມແຕກກັນ ຈຶ່ງບໍ່ເພິ່ງລົງອຸກເຂປະນີຍະກຳພິກຂຸອົງນັ້ນຍ້ອນບໍ່ເຫັນອາບັດ”

## ເລື້ອງພຣະຜູ້ມີພຣະພາກເຈົ້າຊົງແນະນຳໃຫ້ພິກຂຸສະແດງອາບັດ

[໔໕໔] ເມື່ອພຣະຜູ້ມີພຣະພາກເຈົ້າຕັດເລື້ອງນັ້ນແກ່ພວກພິກຂຸຜູ້ລົງອຸກເຂປະນີຍະກຳແລ້ວ ສະເດັດລຸກຈາກອາສະນະ ສະເດັດເຂົ້າໄປຫາພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳປະທັບເທິງພຸດທະອາດທີ່ປູໄວ້ແລ້ວ ໄດ້ຕັດກັບພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳດັ່ງນີ້ວ່າ “ພິກຂຸທັງຫຼາຍ ພວກທ່ານຕ້ອງອາບັດແລ້ວຢ່າຄິດວ່າ ພວກເຮົາບໍ່ໄດ້ຕ້ອງອາບັດ ພວກເຮົາຕ້ອງອາບັດເປັນໄປບໍ່ໄດ້ ສຳຄັນວ່າອາບັດບໍ່ຕ້ອງເຮັດຄືນ

ພິກຂຸທັງຫຼາຍ ກໍໃນກໍລະນີທີ່ພິກຂຸຕ້ອງອາບັດແລ້ວ ມີຄວາມເຫັນໃນອາບັດນັ້ນວ່າບໍ່ເປັນອາບັດ ພວກພິກຂຸອື່ນມີຄວາມເຫັນໃນອາບັດນັ້ນວ່າເປັນອາບັດ ຖ້າພິກຂຸອົງນັ້ນຮູ້ຈັກພິກຂຸເຫຼົ່ານັ້ນແນວນີ້ວ່າ ທ່ານເຫຼົ່ານີ້ແລເປັນພະຫູສູດ ຯລຯ ໃຝ່ການສຶກສາ ຄົງຈະບໍ່ລຳອຽງຍ້ອນຄວາມຮັກ ຍ້ອນຄວາມຊັງ ຍ້ອນຄວາມຫຼົງ ຍ້ອນຄວາມຢ້ານ ຍ້ອນເຮົາເປັນເຫດ ຫຼືຍ້ອນພິກຂຸອື່ນເປັນເຫດ ຖ້າພິກຂຸເຫຼົ່ານີ້ຈະລົງອຸກເຂປະນີຍະກຳເຮົາຍ້ອນບໍ່ເຫັນອາບັດ ພິກຂຸເຫຼົ່ານັ້ນຈະເຮັດອຸໂປສົດຮ່ວມກັບເຮົາບໍ່ໄດ້ ຕ້ອງເຮັດອຸໂປສົດແຍກຈາກເຮົາ ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນເຊິ່ງມີເລື້ອງນັ້ນເປັນເຫດຈະມີແກ່ສົງ ພິກຂຸທັງຫຼາຍ ພວກພິກຂຸຜູ້ສຳນຶກໃນຄວາມແຕກກັນ ຈຶ່ງບໍ່ເພິ່ງລົງອຸກເຂປະນີຍະກຳແກ່ພິກຂຸອົງນັ້ນຍ້ອນບໍ່ເຫັນອາບັດ” ພິກຂຸທັງຫຼາຍ ພິກຂຸຜູ້ໜັກໃນຄວາມແຕກກັນຈຶ່ງເພິ່ງສະແດງອາບັດນັ້ນແມ່ນຍ້ອນເຊື່ອຜູ້ອື່ນ

ພິກຂຸທັງຫຼາຍ ອັນໜຶ່ງ ໃນກໍລະນີທີ່ພິກຂຸຜູ້ຕ້ອງອາບັດແລ້ວ ມີຄວາມເຫັນໃນອາບັດນັ້ນວ່າບໍ່ເປັນອາບັດ ພວກພິກຂຸອື່ນມີຄວາມເຫັນໃນອາບັດນັ້ນວ່າເປັນອາບັດ ຖ້າພິກຂຸອົງນັ້ນຮູ້ຈັກພິກຂຸເຫຼົ່ານັ້ນແນວນີ້ວ່າ ທ່ານເຫຼົ່ານີ້ແລເປັນພະຫູສູດ ຯລຯ ໃຝ່ການສຶກສາ ຄົງຈະບໍ່ລຳອຽງຍ້ອນຄວາມຮັກ ຍ້ອນຄວາມຊັງ ຍ້ອນຄວາມຫຼົງ ຍ້ອນຄວາມຢ້ານ ຍ້ອນເຮົາເປັນເຫດ ຫຼືຍ້ອນພິກຂຸອື່ນເປັນເຫດ ຖ້າພິກຂຸເຫຼົ່ານີ້ຈະລົງອຸກເຂປະນີຍະກຳເຮົາຍ້ອນບໍ່ເຫັນອາບັດ ພິກຂຸເຫຼົ່ານັ້ນຈະປະວາຣະນາຮ່ວມກັບເຮົາບໍ່ໄດ້ ຕ້ອງປະວາຣະນາແຍກຈາກເຮົາ ຈະເຮັດສັງຄະກຳຮ່ວມກັບເຮົາບໍ່ໄດ້ ຕ້ອງເຮັດສັງຄະກຳແຍກຈາກເຮົາ ຈະນັ່ງຮ່ວມເທິງອາສະນະດຽວກັບເຮົາບໍ່ໄດ້ ຕ້ອງນັ່ງເທິງອາສະນະແຍກຈາກເຮົາ ຈະນັ່ງໃນບ່ອນດື່ມເຂົ້າຕົ້ມຮ່ວມກັບເຮົາບໍ່ໄດ້ ຕ້ອງນັ່ງແຍກຈາກເຮົາ ຈະນັ່ງໃນໂຮງອາຫານຮ່ວມກັບເຮົາບໍ່ໄດ້ ຕ້ອງນັ່ງແຍກຈາກເຮົາ ຈະຢູ່ໃນບ່ອນມຸງບັງດຽວຮ່ວມ

ກັບເຮົາບໍ່ໄດ້ ຕ້ອງຢູ່ແຍກຈາກເຮົາ ຈະຂາບໄຫວ້ ຕ້ອນຮັບ ປະນົມມື ເຮັດສາມີຈີກຳຕາມລຳດັບ ພັນສາຮ່ວມກັບເຮົາບໍ່ໄດ້ ຕ້ອງເຮັດແຍກຈາກເຮົາ ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນ ເຊິ່ງມີເລື້ອງນັ້ນເປັນເຫດຈະມີແກ່ສົງ ພິກຂຸທັງຫຼາຍ ພິກຂຸຜູ້ໜັກໃນຄວາມແຕກກັນ ຈຶ່ງເພິ່ງສະແດງອາບັດນັ້ນແມ່ນຍ້ອນເຊື່ອຜູ້ອື່ນ”

ເມື່ອພຣະຜູ້ມີພຣະພາກເຈົ້າຕັດເລື້ອງນັ້ນ ແກ່ພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳແລ້ວ ສະເດັດລຸກຈາກອາສະນະແລ້ວສະເດັດຫຼີກໄປ

## ເລື້ອງພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳ ເຮັດອຸໂປສົດພາຍໃນສີມາ

[໔໕໕] ສະໄໝນັ້ນ ພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳ ເຮັດອຸໂປສົດ ເຮັດສັງຄະກຳພາຍໃນສີມານັ້ນເອງ ສ່ວນພວກພິກຂຸຜູ້ລົງອຸກເຂປະນີຍະກຳໄປເຮັດອຸໂປສົດ ເຮັດສັງຄະກຳນອກສີມາ

ຕໍ່ມາ ພິກຂຸຜູ້ລົງອຸກເຂປະນີຍະກຳອີກຮູບໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍບັງຄົມແລ້ວນັ່ງຢູ່ທີ່ສົມຄວນ ພິກຂຸອົງນັ້ນຜູ້ນັ່ງແລ້ວທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ “ຂ້າແຕ່ ພຣະອົງຜູ້ຈະເລີນ ພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳນັ້ນ ເຮັດອຸໂປສົດ ເຮັດສັງຄະກຳພາຍໃນສີມານັ້ນເອງ ສ່ວນພວກຂ້າພຣະອົງເຊິ່ງເປັນຜູ້ລົງອຸກເຂປະນີຍະກຳກັບຕ້ອງໄປເຮັດອຸໂປສົດເຮັດສັງຄະກຳນອກສີມາ”

ພຣະຜູ້ມີພຣະພາກເຈົ້າຕັດວ່າ “ພິກຂຸ ຖ້າພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳນັ້ນຈະເຮັດອຸໂປສົດ ເຮັດສັງຄະກຳພາຍໃນສີມານັ້ນ ກຳເຫຼົ່ານັ້ນຂອງພິກຂຸເຫຼົ່ານັ້ນເປັນກຳທີ່ຖືກຕ້ອງ ບໍ່ເສຍຫາຍ ຄວນແກ່ຖານະຕາມຍັດຕິແລະອະນຸສາວະນາທີ່ເຮົາບັນຍັດໄວ້ ພິກຂຸ ຖ້າພິກຂຸເຫຼົ່ານັ້ນເອງເຊິ່ງເປັນຜູ້ລົງອຸກເຂປະນີຍະກຳຈະເຮັດອຸໂປສົດສັງຄະກຳພາຍໃນສີມານັ້ນ ກຳເຫຼົ່ານັ້ນແມ່ນຂອງພວກທ່ານກໍເປັນກຳທີ່ຖືກຕ້ອງ ບໍ່ເສຍຫາຍ ຄວນແກ່ຖານະຕາມຍັດຕິແລະອະນຸສາວະນາທີ່ເຮົາບັນຍັດໄວ້ ຂໍ້ນັ້ນເປັນຍ້ອນເຫດໃດ ຍ້ອນພິກຂຸພວກນັ້ນເປັນນານາສັງວາດຈາກພວກທ່ານ ແລະພວກທ່ານກໍເປັນນານາສັງວາດຈາກພິກຂຸພວກນັ້ນ

## ນານາສັງວາສະກະພູມແລະສະມານສັງວາສະກະພູມ

ພິກຂຸ ນານາສັງວາສະກະພູມມີ ໒ ຢ່າງນີ້ ຄື

໑. ພິກຂຸເຮັດຕົນໃຫ້ເປັນນານາສັງວາດດ້ວຍຕົນເອງ

໒. ສົງພ້ອມພຽງກັນລົງອຸກເຂປະນີຍະກຳພິກຂຸອົງນັ້ນ ຍ້ອນບໍ່ເຫັນວ່າເປັນອາບັດ ຍ້ອນບໍ່ເຮັດຄືນອາບັດ ຫຼືຍ້ອນບໍ່ສະລະທິດຖິບາບ

ພິກຂຸ ນານາສັງວາສະກະພູມມີ ໒ ຢ່າງນີ້ແລ

ພິກຂຸ ສະມານະສັງວາສະກະພູມມີ ໒ ຢ່າງນີ້ ຄື

໑. ພິກຂຸເຮັດຕົນໃຫ້ເປັນສະມານະສັງວາດດ້ວຍຕົນເອງ

໒. ສົງພ້ອມພຽງກັນຮັບພິກຂຸຜູ້ຖືກລົງອຸກເຂປະນີຍະກຳຍ້ອນບໍ່ເຫັນວ່າເປັນອາບັດ ຍ້ອນບໍ່ເຮັດຄືນອາບັດ ຫຼືຍ້ອນບໍ່ສະລະທິດຖິບາບເຂົ້າໝູ່

ພິກຂຸ ສະມານະສັງວາສະກະພູມມີ ໒ ຢ່າງນີ້ແລ

[໔໕໖] ສະໄໝນັ້ນ ພວກພິກຂຸເກີດຄວາມໝາງໃຈ ເກີດຄວາມຜິດຖຽງ ວິວາດ ສະແດງກາຍຍະກຳວະຈີກຳອັນບໍ່ສົມຄວນຕໍ່ກັນແລະກັນ ດຶງລາກກັນໃນໂຮງອາຫານໃນບໍລິເວນບ້ານ

ຄົນທັງຫຼາຍຈຶ່ງຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງພຣະສະມະນະເຊື້ອສາຍພຣະສາກະຍະບຸດຈຶ່ງເກີດຄວາມໝາງໃຈ ເກີດຄວາມຜິດຖຽງ ວິວາດ ສະແດງກາຍຍະກຳ ວະຈີກຳອັນບໍ່ສົມຄວນຕໍ່ກັນແລະກັນ ດຶງລາກກັນໃນໂຮງອາຫານໃນບໍລິເວນເຮືອນນໍ"

ພວກພິກຂຸໄດ້ຍິນຄົນເຫຼົ່ານັ້ນຕຳໜິ ປະນາມ ໂພນທະນາ ບັນດາພິກຂຸຜູ້ມັກໜ້ອຍ ຯລຯ ພາກັນຕຳໜິ ປະນາມ ໂພນທະນາວ່າ "ເປັນຫຍັງ ພິກຂຸທັງຫຼາຍ ຈຶ່ງເກີດຄວາມໝາງໃຈ ຯລຯ ດຶງລາກກັນໃນໂຮງສັນໃນບໍລິເວນເຮືອນນໍ" ແລ້ວນຳເລື້ອງນັ້ນໄປຂາບທູນພຣະຜູ້ມີພຣະພາກເຈົ້າຊົງຮັບຮູ້

ພຣະຜູ້ມີພຣະພາກເຈົ້າຕັດຖາມພວກພິກຂຸວ່າ "ຯລຯ ພິກຂຸທັງຫຼາຍ ໄດ້ຂ່າວວ່າພວກພິກຂຸເກີດຄວາມໝາງໃຈ ຯລຯ ຈົນວ່າດຶງລາກກັນໃນໂຮງອາຫານໃນບໍລິເວນເຮືອນແມ່ນບໍ?"

ພິກຂຸທັງຫຼາຍທູນຮັບວ່າ "ເປັນຄວາມຈິງ ຂ້ານ້ອຍ"

ພຣະຜູ້ມີພຣະພາກພຸດທະເຈົ້າຊົງຕຳໜິ ຯລຯ ເມື່ອຊົງຕຳໜິແລ້ວຊົງສະແດງທຳມີກະຖາຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເມື່ອສົງແຕກກັນແລ້ວ ແຕ່ຍັງເຮັດກິດທີ່ບໍ່ເປັນທຳເມື່ອຄຳສະແຫຼງໃຈເປັນໄປຢູ່ ພິກຂຸເຫຼົ່ານັ້ນເພິ່ງນັ່ງເທິງອາສະນະໂດຍຄິດວ່າ ຍ້ອນເຫດພຽງທໍ່ນີ້

ພວກເຮົາຈະບໍ່ສະແດງກາຍຍະກຳ ວະຈີກຳອັນບໍ່ສົມຄວນຕໍ່ກັນແລະກັນ ຈະບໍ່ດຶງລາກກັນ ເມື່ອສົງແຕກກັນແລ້ວ ເຮັດກິດທີ່ບໍ່ເປັນທຳຢູ່ ເມື່ອຄຳສະແຫຼງໃຈເປັນໄປຢູ່ ພວກທ່ານເພິ່ງນັ່ງໃນແຖວທີ່ມີອາສະນະຊັ້ນ"

[໔໕໗] ສະໄໝນັ້ນ ພວກພິກຂຸເກີດຄວາມໝາງໃຈ ເກີດການຜິດຖຽງກັນ ວິວາດກັນ ຈົນວ່າໃຊ້ຫອກຄືປາກສຽບແທງກັນຢູ່ໃນທ່າມກາງສົງ ພິກຂຸເຫຼົ່ານັ້ນບໍ່ສາມາດລະງັບອະທິກອນນັ້ນໄດ້

ຄັ້ງນັ້ນ ພິກຂຸອົງໜຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດແລ້ວຢືນຢູ່ທີ່ສົມຄວນ ພິກຂຸອົງນັ້ນຜູ້ຢືນຢູ່ທີ່ສົມຄວນແລ້ວ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຂໍປະທານວະໂຣກາດ ພວກພິກຂຸເກີດຄວາມໝາງໃຈ ເກີດການຜິດຖຽງກັນ ວິວາດກັນ ຈົນວ່າໃຊ້ຫອກຄືປາກສຽບແທງກັນຢູ່ໃນທ່າມກາງສົງ ພິກຂຸເຫຼົ່ານັ້ນບໍ່ສາມາດລະງັບອະທິກອນນັ້ນໄດ້ ຂ້ານ້ອຍ ຂໍປະທານວະໂຣກາດ ຂໍພຣະຜູ້ມີພຣະພາກເຈົ້າຊົງໂຜດອະນຸເຄາະສະເດັດໄປຫາພວກພິກຂຸເຫຼົ່ານັ້ນເທີ້ນ"

ພຣະຜູ້ມີພຣະພາກເຈົ້າຮັບອາຣາດທະນາໂດຍດຸດສະນີພາບ

ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດເຂົ້າໄປຫາພວກພິກຂຸເຫຼົ່ານັ້ນຮອດບ່ອນຢູ່ ປະທັບນັ່ງເທິງພຸດທະອາດທີ່ປູໄວ້ໄດ້ຕັດກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ "ຢ່າເລີຍ ພິກຂຸທັງຫຼາຍ ພວກທ່ານຢ່າໝາງໃຈກັນ ຢ່າຜິດກັນ ຢ່າຂັດແຍ່ງກັນ ຢ່າວິວາດກັນເລີຍ"

ເມື່ອພຣະຜູ້ມີພຣະພາກເຈົ້າຕັດແບວນີ້ ພິກຂຸຝ່າຍອະທຳມະວາທີອົງໜຶ່ງໆໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂໍພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນທຳມະສາມີຊົງໂຜດຖ້າໄປກ່ອນ ຂ້ານ້ອຍ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຂົນຂວາຍນ້ອຍ ປະກອບຕາມສຸກຂະວິຫາຣະທຳໃນປັດຈຸບັນຢູ່ເທີ້ນ ຂ້ານ້ອຍ ພວກຂ້າພຣະອົງຈະຜາກົດຍ້ອນຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ແລະຄວາມວິວາດນັ້ນເອງ"

ແມ່ນເທື່ອທີ ໔ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ "ຢ່າເລີຍ ພິກຂຸທັງຫຼາຍ ພວກທ່ານຢ່າໝາງໃຈກັນ ຢ່າຜິດກັນ ຢ່າຂັດແຍ່ງກັນ ຢ່າວິວາດກັນເລີຍ"

ພິກຂຸຝ່າຍອະທຳມະວາທີອົງນັ້ນໄດ້ຂາບທູນອີກເປັນຄັ້ງທີ ໔ ວ່າ "ຂໍພຣະຜູ້ມີພຣະພາກເຈົ້າ ຜູ້ຊົງເປັນທຳມະສາມີຊົງໂຜດຖ້າໄປກ່ອນ ຂ້ານ້ອຍ ຂໍພຣະຜູ້ມີພຣະພາກເຈົ້າຈົ່ງຊົງຂົນຂວາຍນ້ອຍ ປະກອບຕາມສຸກຂະວິຫາຣະທຳໃນປັດຈຸບັນຢູ່ເທີ້ນ ຂ້ານ້ອຍ ພວກຂ້າພຣະອົງຈະຜາກົດຍ້ອນຄວາມ ໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ແລະຄວາມວິວາດນັ້ນເອງ"

# ໔໗໔. ທີຄາວຸວັດຖຸ

## ວ່າດ້ວຍທີຄາວຸກຸມານ

[໔໕໗] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຮັບສັ່ງກັບພິກຂຸທັງຫຼາຍວ່າ "ພິກຂຸທັງຫຼາຍ ເລື້ອງເຄີຍມີມາແລ້ວ ໃນນະຄອນພາຣານະສີ ໄດ້ມີພຣະເຈົ້າກາສີພຣະນາມວ່າພົມມະທັດ ຊົງເປັນ ກະສັດຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະສົມບັດຫຼາຍ ມີກຳລັງພົນຫຼາຍ ມີພາຫະນະຫຼາຍ ມີອານາຈັກກວ້າງໃຫຍ່ ມີພັນທາຄານຫ້ອງເກັບຂອງມີຄ່າແລະຄັງພືດພັນທັນຍາຫານອຸດົມ ສົມບູນ

ພຣະເຈົ້າໂກສົນຊົງພຣະນາມວ່າທີຄີຕິຊົງເປັນກະສັດຜູ້ຂັດສົນ ມີຊັບໜ້ອຍ ມີໂພຄະສົມບັດໜ້ອຍ ມີກຳລັງພົນໜ້ອຍ ມີພາຫະນະໜ້ອຍ ມີອານາຈັກບໍ່ກວ້າງໃຫຍ່ ມີພັນທາຄານ ຫ້ອງເກັບຂອງມີຄ່າແລະຄັງພືດພັນທັນຍາຫານບໍ່ອຸດົມສົມບູນ

ພິກຂຸທັງຫຼາຍ ຄັ້ງນັ້ນ ພຣະເຈົ້າພົມມະທັດກາສີຣາດສະເດັດຄຸມກອງທະຫານປະກອບດ້ວຍອົງ ໔ ໄປໂຈມຕີພຣະເຈົ້າທີຄີຕິໂກສົນຣາດ

ພິກຂຸທັງຫຼາຍ ພຣະເຈົ້າທີຄີຕິໂກສົນຣາດຊົງສະດັບວ່າ "ພຣະເຈົ້າພົມມະທັດກາສີຣາດສະເດັດຄຸມກອງທະຫານປະກອບດ້ວຍອົງ ໔ ມາໂຈມຕີເຮົາ" ຈຶ່ງຊົງດຳຣິດັ່ງນີ້ວ່າ "ພຣະເຈົ້າພົມມະທັດກາສີຣາດ ຊົງເປັນກະສັດຜູ້ຮັ່ງມີ ມີຊັບຫຼາຍ ມີໂພຄະສົມບັດຫຼາຍ ມີກຳລັງພົນຫຼາຍ ມີພາຫະນະຫຼາຍ ມີອານາຈັກກວ້າງໃຫຍ່ ມີພັນທາຄານຫ້ອງເກັບຂອງມີຄ່າແລະຄັງພືດພັນທັນຍາຫານອຸດົມສົມບູນ ສ່ວນເຮົາເອງເປັນກະສັດຜູ້ຂັດສົນ ມີຊັບໜ້ອຍ ມີໂພຄະສົມບັດໜ້ອຍ ມີກຳລັງພົນໜ້ອຍ ມີພາຫະນະໜ້ອຍ ມີອານາຈັກບໍ່ກວ້າງໃຫຍ່ ມີພັນທາຄານຫ້ອງເກັບຂອງມີຄ່າແລະຄັງພືດພັນທັນຍາຫານບໍ່ອຸດົມສົມບູນ ເຮົາບໍ່ສາມາດຈະເຮັດສົງຄາມແມ່ນພຽງເທື່ອດຽວກັບພຣະເຈົ້າພົມມະທັດກາສີຣາດໄດ້ເລີຍ ຢ່າຈັ່ງຊັ້ນເລີຍ ເຮົາຄວນຟ້າວໜີໄປຈາກເມືອງກ່ອນ"

ພິກຂຸທັງຫຼາຍ ລຳດັບນັ້ນ ພຣະເຈົ້າທີຄີຕິໂກສົນຣາດຈຶ່ງຊົງພາພຣະມະເຫສີສະເດັດໜີໄປຈາກເມືອງກ່ອນ

ຝ່າຍພຣະເຈົ້າພົມມະທັດກາສີຣາດຊົງຍຶດກຳລັງພົນ ພາຫະນະ ຊົນນະບົດ ຄັງອາວຸດຍຸດໂທປະກອນແລະຄັງພືດພັນທັນຍາຫານຂອງພຣະເຈົ້າທີຄີຕິໂກສົນຣາດໄວ້ໄດ້ແລ້ວສະເດັດເຂົ້າຄອບຄອງແທນ

ພິກຂຸທັງຫຼາຍ ຄັ້ງນັ້ນ ພຣະເຈົ້າທີຄີຕິໂກສົນຣາດ ພ້ອມດ້ວຍພຣະມະເຫສີໄດ້ສະເດັດໜີໄປທາງນະຄອນພາຣານະສີ ສະເດັດຈາຣິກໄປຕາມລຳດັບ ຂອດເຖິງນະຄອນພາຣານະສີແລ້ວ

ໄດ້ຂ່າວວ່າພຣະອົງພ້ອມກັບພຣະມະເຫສີຊົງປອມແປງພຣະອົງບໍ່ໃຫ້ຄົນຮູ້ຈັກ ຊົງນຸ່ງຫົ່ມຢ່າງປະຣິພາຊົກ ປະທັບຢູ່ໃນເຮືອນຊ່າງໝໍ້ເຊິ່ງຕັ້ງຢູ່ຊາຍແດນແຫ່ງໜຶ່ງໃນນະຄອນພາຣານະສີ

ພິກຂຸທັງຫຼາຍ ຕໍ່ມາບໍ່ດົນປານໃດ ພຣະມະເຫສີຂອງພຣະເຈົ້າທີຄີຕິໂກສົນຣາດຊົງຖືພາ ພຣະນາງເກີດອາການແພ້ທ້ອງແນວນີ້ ຄື ໃນຍາມອາລຸນ ພຣະນາງປາຖະໜາ ຈະທອດພຣະເນດກອງທະຫານປະກອບດ້ວຍອົງ ໔ ຜູ້ໃສ່ເກາະຢືນຢູ່ໃນສະໜໍລະພູມ ແລະຈະຊົງສະເຫວີຍນໍ້າລ້າງພຣະແສງຂັນ

ພິກຂຸທັງຫຼາຍ ຄັ້ງນັ້ນ ພຣະມະເຫສີຂອງພຣະເຈົ້າທີຄີຕິໂກສົນຣາດຈຶ່ງໄດ້ຂາບທູນ

ດັ່ງນີ້ວ່າ "ຂໍເດຊະ ຂ້ານ້ອຍຖືພາ ຂ້ານ້ອຍນັ້ນເກີດອາການປຣາໄຊທ້ອງແນວນີ້ ຄື ຍາມອາລຸນປາຖະໜາຈະທອດພຣະເນດກອງທະຫານປະກອບດ້ວຍອົງ ໔ ຜູ້ໃສ່ເກາະ ຢືນຢູ່ໃນສະໜໍລະພູມ ແລະຈະຊົງສະເຫວີຍນໍ້າລ້າງພຣະແສງຂັນ"

ພຣະເຈົ້າທີຄີຕິຕັດວ່າ "ເທວີ ເຮົາກຳລັງຕົກຍາກ ຈະໄດ້ກອງທະຫານປະກອບດ້ວຍ ອົງ ໔ ຜູ້ໃສ່ເກາະຢືນຢູ່ໃນສະໜໍລະພູມແລະນໍ້າລ້າງພຣະແສງຂັນຈາກບ່ອນໃດນໍ"

ພຣະຣາຊະເທວີຂາບທູນວ່າ "ຂໍເດຊະ ຖ້າຂ້ານ້ອຍບໍ່ໄດ້ຄົງຕາຍແນ່"

[໔໕໙] ພິກຂຸທັງຫຼາຍ ກໍສະໄໝນັ້ນ ພາມປຸໂຣຫິດຂອງພຣະເຈົ້າພົມມະທັດກາສີຣາດເປັນພຣະສະຫາຍຂອງພຣະເຈົ້າທີຄີຕິໂກສົນຣາດ ລຳດັບນັ້ນ ພຣະເຈົ້າທີຄີຕິໂກສົນຣາດສະເດັດເຂົ້າໄປຫາພາມປຸໂຣຫິດຂອງພຣະເຈົ້າພົມມະທັດກາສີຣາດ ເຖິງທີ່ພັກ ແລ້ວຕັດກັບພາມປຸໂຣຫິດຂອງພຣະເຈົ້າພົມມະທັດກາສີຣາດດັ່ງນີ້ວ່າ "ເພື່ອນເອີຍ ສະຫາຍຍິງຂອງທ່ານຖືພາ ນາງເກີດອາການແພ້ທ້ອງແນວນີ້ ຄື ເມື່ອຍາມອາລຸນ ນາງປາຖະໜາຈະຊົມກອງທະຫານປະກອບດ້ວຍອົງ ໔ ຜູ້ໃສ່ເກາະຢືນໃນສະໜໍລະພູມ ແລະຈະດື່ມນໍ້າລ້າງພຣະແສງຂັນ"

ປຸໂຣຫິດຂາບທູນວ່າ "ຂໍເດຊະ ຖ້າເປັນແນວນັ້ນ ຂ້ານ້ອຍຂໍເຝົ້າພຣະເທວີກ່ອນ"

ລຳດັບນັ້ນ ພຣະມະເຫສີຂອງພຣະເຈົ້າທີຄີຕິໂກສົນຣາດໄດ້ສະເດັດໄປຫາພາມປຸໂຣຫິດຂອງພຣະເຈົ້າພົມມະທັດກາສີຣາດເຖິງທີ່ພັກ

ພິກຂຸທັງຫຼາຍ ພາມປຸໂຣຫິດຂອງພຣະເຈົ້າພົມມະທັດກາສີຣາດໄດ້ແນມເຫັນພຣະມະເຫສີຂອງພຣະເຈົ້າທີຄີຕິໂກສົນກຳລັງສະເດັດມາແຕ່ໄກ ຈຶ່ງລຸກຈາກອາສະນະຫົ່ມຜ້າບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງພຣະມະເຫສີແລ້ວອຸທານຂຶ້ນ ໓ ຄັ້ງວ່າ "ທ່ານຜູ້ຈະເລີນ ພຣະເຈົ້າໂກສົນປະທັບຢູ່ໃນພຣະອຸທອນແນ່ແລ້ວ ທ່ານຜູ້ຈະເລີນ ພຣະເຈົ້າໂກສົນປະທັບຢູ່ໃນພຣະອຸທອນແນ່ແລ້ວ ພຣະເທວີຢ່າໄດ້ທໍ້ພຣະຫະໄທເລີຍ ເມື່ອຍາມອາລຸນຈະໄດ້ທອດພຣະເນດກອງທະຫານປະກອບດ້ວຍອົງ ໔ ຜູ້ໃສ່ເກາະຢືນຢູ່ໃນສະໜໍລະພູມແລະຈະໄດ້ສະເຫວີຍນໍ້າລ້າງພຣະແສງຂັນ"

ພິກຂຸທັງຫຼາຍ ຄັ້ງນັ້ນ ພາມປຸໂຣຫິດຂອງພຣະເຈົ້າພົມມະທັດກາສີຣາດເຂົ້າໄປເຝົ້າພຣະເຈົ້າພົມມະທັດກາສີຣາດ ເຖິງທີ່ປະທັບ ແລ້ວໄດ້ຂາບທູນດັ່ງນີ້ວ່າ "ຂໍເດຊະ ນິມິດທັງຫຼາຍຜາກົດແນວນັ້ນ ຄື ມື້ອື່ນຍາມອາລຸນ ກອງທະຫານປະກອບດ້ວຍອົງ ໔ ຈະໃສ່ເກາະຢືນຢູ່ໃນສະໜໍລະພູມ ແລະເຈົ້າພະນັກງານຈະເອົານ້ຳລ້າງພຣະແສງຂັນ"

ລຳດັບນັ້ນ ພຣະເຈົ້າພົມມະທັດກາສີຣາດຈຶ່ງຮັບສັ່ງກັບເຈົ້າພະນັກງານວ່າ "ພະນາຍພວກເຈົ້າຈົ່ງເຮັດຕາມທີ່ພາມປຸໂຣຫິດສັ່ງການເທີ້ນ"

ພິກຂຸທັງຫຼາຍ ພຣະມະເຫສີຂອງພຣະເຈົ້າທີຄີຕິໂກສົນຣາດຈຶ່ງໄດ້ທອດພຣະເນດກອງທະຫານປະກອບດ້ວຍອົງ ໔ ຜູ້ໃສ່ເກາະຢືນຢູ່ໃນສະໜໍລະພູມ ແລະໄດ້ສະເຫວີຍນ້ຳລ້າງພຣະແສງຂັນໃນເວລາອາລຸນສົມຄວາມປາຖະໜາ ຕໍ່ມາເມື່ອພຣະອຸທອນແກ່ຄົບກຳນົດຈຶ່ງປະສູດພຣະໂອຣົດ ພຣະປະຍູນຍາດໄດ້ຂະໜານພຣະນາມໃຫ້ວ່າ ທີຄາວຸ ຕໍ່ມາບໍ່ດົນປານໃດ ພຣະກຸມານໄດ້ຊົງຈະເລີນໄວຮູ້ດຽງສາ

ພິກຂຸທັງຫຼາຍ ຄັ້ງນັ້ນ ພຣະເຈົ້າທີຄີຕິໂກສົນຣາດຊົງມີດຳຣິດັ່ງນີ້ວ່າ "ພຣະເຈົ້າພົມມະທັດກາສີຣາດນີ້ໄດ້ກໍ່ສິ່ງທີ່ບໍ່ແມ່ນປະໂຫຍດໃຫ້ແກ່ເຮົາຫຼວງຫຼາຍ ໄດ້ໂອກາດຊົງເອົາກອງທະຫານພາຫະນະ ຊົນນະບົດ ຄັງອາວຸດຍຸດໂທປະກອນຕະຫຼອດເຖິງຄັງພືດພັນທັນຍາຫານຂອງພວກເຮົາ ໄປ ຖ້າພຣະອົງຈະຊົງສືບຮູ້ເຖິງພວກເຮົາ ຈະຮັບສັ່ງໃຫ້ປະຫານຊີວິດໝົດທັງ ໓ ຄົນແນ່ຢ່າຈັ່ງຊັ້ນເລີຍ ເຮົາຄວນໃຫ້ທີຄາວຸກຸມານຫຼົບຢູ່ນອກເມືອງ" ແລ້ວໄດ້ໃຫ້ທີຄາວຸກຸມານ ຫຼົບຢູ່ນອກເມືອງ ທີຄາວຸກຸມານອາໄສຢູ່ນອກເມືອງບໍ່ດົນກໍໄດ້ສຶກສາສິລະປະວິທະຍາຈົບທຸກສາຂາ

[໔໖໐] ພິກຂຸທັງຫຼາຍ ສະໄໝນັ້ນ ຊ່າງຕັດຜົມຂອງພຣະເຈົ້າທີຄີຕິໂກສົນຣາດໄດ້ສະວາມິພັກຢູ່ໃນສຳນັກຂອງພຣະເຈົ້າພົມມະທັດກາສີຣາດ ເຂົາໄດ້ເຫັນພຣະເຈົ້າທີຄີຕິໂກສົນຣາດພ້ອມກັບພຣະມະເຫສີຊົງປອມແປງພຣະອົງບໍ່ໃຫ້ໃຜຮູ້ຈັກ ຊົງນຸ່ງຫົ່ມຢ່າງປະຣິພາຊົກປະທັບຢູ່ໃນເຮືອນຊ່າງໝໍ້ເຊິ່ງຕັ້ງຢູ່ຊາຍແດນແຫ່ງໜຶ່ງໃນນະຄອນພາຣານະສີ ຈຶ່ງໄດ້ເຂົ້າໄປເຝົ້າ ພຣະເຈົ້າພົມມະທັດກາສີຣາດແລ້ວຂາບທູນວ່າ "ຂໍເດຊະ ພຣະເຈົ້າທີຄີຕິໂກສົນຣາດພ້ອມດ້ວຍ ພຣະມະເຫສີຊົງປອມແປງພຣະອົງບໍ່ໃຫ້ໃຜຮູ້ຈັກ ຊົງນຸ່ງຫົ່ມຢ່າງປະຣິພາຊົກ ປະທັບຢູ່ ໃນເຮືອນຊ່າງໝໍ້ເຊິ່ງຕັ້ງຢູ່ຊາຍແດນແຫ່ງໜຶ່ງໃນນະຄອນພາຣານະສີ"

ພິກຂຸທັງຫຼາຍ ລຳດັບນັ້ນ ພຣະເຈົ້າພົມມະທັດກາສີຣາດຈຶ່ງຮັບສັ່ງເຈົ້າພະນັກງານວ່າ "ພະນາຍ ຖ້າເປັນແນວນັ້ນ ພວກເຈົ້າຈົ່ງໄປຈັບພຣະເຈົ້າທີຄີຕິໂກສົນຣາດພ້ອມດ້ວຍພຣະມະເຫສີມາ"

ພວກເຈົ້າພະນັກງານຂາບທູນຮັບສະໜອງພຣະດຳຣັດ ແລ້ວໄປຈັບພຣະເຈົ້າທີຄີຕິໂກສົນຣາດ ພ້ອມພຣະມະເຫສີມາຖວາຍ

ພຣະເຈົ້າພົມມະທັດກາສີຣາດຮັບສັ່ງເຈົ້າພະນັກງານວ່າ "ພວກເຈົ້າຈົ່ງເອົາເຊືອກທີ່ໜຽວແໜ້ນ ມັດພຣະເຈົ້າທີຄີຕິໂກສົນຣາດພ້ອມກັບພຣະມະເຫສີ ມັດພຣະພາຫາໄຂວ້ຫຼັງໃຫ້ແໜ້ນ ຕັດພຣະເກສາແລ້ວພາແຫ່ໄປຕາມຖະໜົນ ຕາມຮ່ອມທຸກແຫ່ງພ້ອມກັບຕີກອງໃຫ້ດັງ ສະໜັ່ນ ພາອອກໄປທາງປະຕູດ້ານທິດທັກຂິນແລ້ວບັ່ນຮ່າງອອກເປັນ ໔ ທ່ອນວາງລຽງໄວ້ໃນຂຸມທັງ ໔ ທິດທາງດ້ານທິດທັກຂິນແຫ່ງເມືອງ"

ພິກຂຸທັງຫຼາຍ ພວກເຈົ້າພະນັກງານທູນຮັບສະໜອງພຣະຣາຊະດຳຣັດແລ້ວໄດ້ເອົາເຊືອກທີ່ໜຽວແໜ້ນມັດພຣະເຈົ້າທີຄີຕິພ້ອມກັບພຣະມະເຫສີ ມັດພຣະພາຫາໄຂວ້ຫຼັງໃຫ້ແໜ້ນ ຕັດພຣະເກສາແລ້ວພາແຫ່ໄປຕາມຖະໜົນ ຕາມຮ່ອມທຸກແຫ່ງພ້ອມກັບຕີກອງໃຫ້ດັງສະໜັ່ນ

ເວລານັ້ນ ທີຄາວຸຣາດຊະກຸມານຊົງດຳຣິດັ່ງນີ້ວ່າ "ດົນແລ້ວທີ່ເຮົາໄດ້ຢ້ຽມພຣະຊະນົກຊົນນີ ຢ່າຈັ່ງຊັ້ນເລີຍ ເຮົາຄວນໄປຢ້ຽມທ່ານທັງສອງ" ຈຶ່ງເດີນທາງເຂົ້ານະຄອນພາຣານະສີ ໄດ້ທອດພຣະເນດເຫັນເຈົ້າພະນັກງານເອົາເຊືອກແນວໜຽວມັດພຣະຊະນົກຊົນນີ ມັດພຣະພາຫາໄຂວ້ຫຼັງໃຫ້ແໜ້ນ ຕັດພຣະເກສາແລ້ວແຫ່ໄປຕາມຖະໜົນຕາມຮ່ອມທຸກແຫ່ງພ້ອມກັບຕີກອງໃຫ້ດັງສະໜັ່ນ ຈຶ່ງສະເດັດເຂົ້າໄປໃກ້ພຣະຊະນົກຊົນນີ

ພິກຂຸທັງຫຼາຍ ພຣະເຈົ້າທີຄີຕິໂກສົນຣາດທອດພຣະເນດເຫັນທີຄາວຸກຸມານດຳເນີນມາແຕ່ໄກຈຶ່ງໄດ້ຕັດດັ່ງນີ້ວ່າ "ທີຄາວຸ ເຈົ້າຢ່າເຫັນແກ່ຍາວ ຢ່າເຫັນແກ່ສັ້ນ ເວນຍ່ອມບໍ່ລະງັບດ້ວຍການຈອງເວນ ແຕ່ລະງັບໄດ້ດ້ວຍການບໍ່ຈອງເວນ"

ເມື່ອພຣະເຈົ້າທີຄີຕິໂກສົນຣາດຕັດແນວນີ້ ພວກເຈົ້າພະນັກງານໄດ້ຂາບທູນດັ່ງນີ້ວ່າ "ພຣະເຈົ້າທີຄີຕິໂກສົນຣາດພຣະອົງນີ້ຊົງວິກົນຈະລິດຈຶ່ງຈົ່ມເພີ້ ໃຜຄືທີຄາວຸຂອງພຣະເຈົ້າທີຄີຕິໂກສົນຣາດນີ້ ພຣະອົງຕັດກັບໃຜແນວນີ້ວ່າ ທີຄາວຸ ເຈົ້າຢ່າເຫັນແກ່ຍາວ ຢ່າເຫັນແກ່ສັ້ນ ເວນຍ່ອມບໍ່ລະງັບດ້ວຍການຈອງເວນ ແຕ່ລະງັບໄດ້ດ້ວຍການບໍ່ຈອງເວນ"

ພຣະເຈົ້າທີຄີຕິໂກສົນຣາດຈຶ່ງຕັດຕອບວ່າ "ເຮົາບໍ່ໄດ້ວິກົນຈະລິດຈົ່ມເພີ້ ຜູ້ໃດຮູ້ແຈ້ງ ຜູ້ນັ້ນຈະເຂົ້າໃຈ"

ພິກຂຸທັງຫຼາຍ ແມ່ນເທື່ອທີ ໒ ໗ລ໗

ແມ່ນເທື່ອທີ ໓ ພຣະເຈົ້າທີຄີຕິໂກສົນຣາດໄດ້ຕັດກະທີຄາວຸກຸມານດັ່ງນີ້ວ່າ "ທີຄາວຸ ເຈົ້າຢ່າເຫັນແກ່ຍາວ ຢ່າເຫັນແກ່ສັ້ນ ເວນຍ່ອມບໍ່ລະງັບດ້ວຍການຈອງເວນ ແຕ່ລະງັບໄດ້ດ້ວຍການບໍ່ຈອງເວນ"

ພິກຂຸທັງຫຼາຍ ແມ່ນເທື່ອທີ ໓ ພວກເຈົ້າພະນັກງານກໍໄດ້ຂາບທູນດັ່ງນີ້ວ່າ "ພຣະເຈົ້າທີຄີຕິໂກສົນຣາດພຣະອົງນີ້ຊົງວິກົນຈະລິດຈຶ່ງຈົ່ມເພີ້ ໃຜຄືທີຄາວຸຂອງພຣະເຈົ້າທີຄີຕິໂກສົນຣາດນີ້

ພຣະອົງ ຕັດກັບໃຜແນວນີ້ວ່າ ທີຄາວຸ ເຈົ້າຢ່າເຫັນແກ່ຍາວ ຢ່າເຫັນແກ່ສັ້ນ ເວນຍ່ອມບໍ່ລະງັບດ້ວຍການຈອງເວນ ແຕ່ລະງັບໄດ້ດ້ວຍການບໍ່ຈອງເວນ"

ພຣະເຈົ້າທີຄີຕິໂກສົນຣາດກໍຍັງຄົງຕັດວ່າ "ເຮົາບໍ່ໄດ້ວິກົນຈະລິດຈົ່ມເພີ້ ຜູ້ໃດຮູ້ແຈ້ງ ຜູ້ນັ້ນ ຈະເຂົ້າໃຈ"

ພິກຂຸທັງຫຼາຍ ລຳດັບນັ້ນ ພວກເຈົ້າພະນັກງານໄດ້ນຳພຣະເຈົ້າທີຄີຕິໂກສົນຣາດພ້ອມກັບພຣະມະເຫສີແຫ່ໄປຕາມຖະໜົນຕາມຮ່ອມທຸກແຫ່ງແລ້ວໃຫ້ອອກໄປທາງປະຕູດ້ານທິດທັກຂິນແລ້ວບັ່ນພຣະກາຍເປັນ ๔ ທ່ອນແລ້ວວາງລຽງໄວ້ໃນຂຸມທັງ ๔ ທິດທາງດ້ານທິດທັກຂິນແຫ່ງເມືອງ ວາງຍາມຖ້າລະວັງເຫດການໄວ້ແລ້ວພາກັນກັບ

ຕໍ່ມາ ທີຄາວຸກຸມານລອບສະເດັດເຂົ້າໄປໃນເມືອງພາຣານະສີ ນຳສຸຣາມາລ້ຽງພວກຢູ່ຍາມ ເມື່ອພວກຍາມເມົາຟຸບລົງ ຈຶ່ງຈັດຫາຟືນມາວາງລຽງກັນແລ້ວຫາໄມ້ມາສ້າງຈິດຕະກາທານຍົກພຣະບໍຣົມສົບຂອງພຣະຊະນົກຊົນນີຂຶ້ນສູ່ຈິດຕະກາທານ ຖວາຍພຣະເພີງແລ້ວປະນົມພຣະຫັດກະທຳປະທັກຂິນຈິດຕະກາທານ ๓ ຮອບ

[๔໖໑] ພິກຂຸທັງຫຼາຍ ສະໄໝນັ້ນ ພຣະເຈົ້າພົມມະທັດກາສີຣາດປະທັບຢູ່ຊັ້ນເທິງຜາສາດ ທອດພຣະເນດເຫັນທີຄາວຸກຸມານກຳລັງປະນົມພຣະຫັດກະທຳປະທັກຂິນຈິດກາທານ ๓ ຮອບ ຈຶ່ງຊົງດຳຣິດັ່ງນີ້ວ່າ "ພະນັກງານຜູ້ນັ້ນຄົງເປັນຍາດຫຼືຄົນຮ່ວມສາຍໂລຫິດຂອງພຣະເຈົ້າທີຄີຕິໂກສົນຣາດແນ່ ເປັນຕາຢ້ານຈະກໍ່ຄວາມພິນາດແກ່ເຮົາ ຊ່າງບໍ່ມີໃຜບອກເຮົາເລີຍ"

ພິກຂຸທັງຫຼາຍ ຄັ້ງນັ້ນ ທີຄາວຸກຸມານສະເດັດຫຼີບເຂົ້າປ່າ ຊົງກັນແສງດ້ວຍຄວາມໂສກເສົ້າພຣະຫະໄທ ຊົງຊັບນ້ຳພຣະເນດແລ້ວສະເດັດເຂົ້ານະຄອນພາຣານະສີ ເຖິງໂຮງຊ້າງໃກ້ພຣະບໍຣົມມະຫາຣາດຊະວັງ ຕັດແກ່ນາຍຫັດຖາຈານດັ່ງນີ້ວ່າ "ທ່ານອາຈານ ຂ້ານ້ອຍຢາກຮຽນສິລະປະວິທະຍາ"

ນາຍຫັດຖາຈານຕອບວ່າ "ຖ້າເປັນແນວນັ້ນ ເຊີນທ້າວມາຮຽນເທີ້ນ"

ເຊົ້າມືດມື້ໜຶ່ງ ທີຄາວຸກຸມານຊົງຕື່ນບັນທົມ ຊົງຂັບຮ້ອງໃສ່ສຽງດີດພິນສຽງວອນໆຢູ່ທີ່ໂຮງຊ້າງ ພຣະເຈົ້າພົມມະທັດກາສີຣາດຊົງຕື່ນບັນທົມເວລານັ້ນພໍດີ ໄດ້ຊົງສະດັບ ສຽງເພງແລະສຽງພິນທີ່ດັງແວ່ວມາທາງໂຮງຊ້າງ ຈຶ່ງຕັດຖາມພວກເຈົ້າພະນັກງານວ່າ "ໃຜກັນຕື່ນແຕ່ເຊົ້າຂັບຮ້ອງດີດພິນແວ່ວມາທາງໂຮງຊ້າງ"

ພວກເຈົ້າພະນັກງານຂາບທູນວ່າ "ຂໍເດຊະ ຊາຍໜຸ່ມສິດຂອງນາຍຫັດຖາຈານຄົນນັ້ນຕື່ນແຕ່ເຊົ້າ ຂັບຮ້ອງໃສ່ສຽງດີດພິນສຽງວອນໆຢູ່ທີ່ໂຮງຊ້າງ"

ພຣະເຈົ້າພິມມະທັດກາສີຣາດຕັດວ່າ "ຖ້າຈັ່ງຊັ້ນ ພວກເຈົ້າຈົ່ງພາຊາຍໜຸ່ມມາເຝົ້າ" ພວກເຈົ້າພະນັກງານທູນຮັບສະໜອງພຣະຣາຊະດຳຣັດແລ້ວ ພາທິຄາວຸກຸມານມາເຝົ້າ

ພິກຂຸທັງຫຼາຍ ພຣະເຈົ້າພິມມະທັດກາສີຣາດຕັດຖາມທິຄາວຸກຸມານດັ່ງນີ້ວ່າ "ທ້າວ ເຈົ້າຕື່ນແຕ່ເຊົ້າ ຂັບຮ້ອງໃສ່ສຽງດີດພິນສຽງວອນໆຢູ່ທີ່ໂຮງຊ້າງບໍ"

ທິຄາວຸກຸມານຂາບທູນວ່າ "ເປັນແນວນັ້ນ ຂ້ານ້ອຍ"

ພຣະອົງຕັດວ່າ "ຖ້າເປັນແນວນັ້ນ ເຈົ້າຈົ່ງຂັບຮ້ອງດີດພິນໄປເທີ້ນ"

ທິຄາວຸກຸມານຂາບທູນຮັບສະໜອງພຣະຣາຊະດຳຣັດແລ້ວ ປາຖະໜາຈະໃຫ້ຊົງໂຜດຈຶ່ງຂັບຮ້ອງແລະດີດພິນດ້ວຍສຽງອັນມ່ວນ

ພິກຂຸທັງຫຼາຍ ຄັ້ງນັ້ນ ພຣະເຈົ້າພິມມະທັດກາສີຣາດໄດ້ຕັດກັບທິຄາວຸກຸມານດັ່ງນີ້ວ່າ "ທ້າວ ເຈົ້າຈົ່ງຢູ່ຮັບໃຊ້ເຮົາເທີ້ນ"

ທິຄາວຸກຸມານທູນຮັບສະໜອງພຣະຣາຊະດຳຣັດແລ້ວຈຶ່ງໄດ້ປະພຶດທຳນອງຕື່ນກ່ອນນອນພາຍຫຼັງ ຖ້າເຝົ້າປົນນິບັດ ເຮັດໃຫ້ຖືກພຣະອັດທະຍາໄສ ເວົ້າມ່ວນ

ພິກຂຸທັງຫຼາຍ ບໍ່ດົນປານໃດ ພຣະເຈົ້າພິມມະທັດກາສີຣາດຊົງແຕ່ງຕັ້ງທິຄາວຸກຸມານໄວ້ໃນຕຳ ແໜ່ງມະຫາດນ້ອຍຄົນສະນິດພາຍໃນ

[໔໒໔] ພິກຂຸທັງຫຼາຍ ຕໍ່ມາ ພຣະເຈົ້າພິມມະທັດກາສີຣາດຕັດກັບທິຄາວຸກຸມານດັ່ງນີ້ວ່າ "ທ້າວ ເຈົ້າຈົ່ງທຽມລົດ ພວກເຮົາຈະໄປລ່າເນື້ອ"

ທິຄາວຸກຸມານທູນຮັບສະໜອງພຣະຣາຊະດຳຣັດແລ້ວຈັດທຽມລົດໄວ້ໄດ້ຂາບທູນວ່າ "ຂໍເດຊະ ລົດພຣະທີ່ນັ່ງທຽມສຳເລັດແລ້ວ ເວລານີ້ຂໍໄດ້ຊົງໂຜດຮູ້ເວລາອັນຄວນເທີ້ນ"

ລຳດັບນັ້ນ ພຣະເຈົ້າພິມມະທັດກາສີຣາດສະເດັດຂຶ້ນຣາດຊະລົດ ທິຄາວຸກຸມານຂັບຣາດຊະລົດແຍກໄປທາງໜຶ່ງຈາກກອງທະຫານ ເມື່ອພຣະອົງສະເດັດໄປໄກຈຶ່ງຕັດກັບທິຄາວຸກຸມານວ່າ "ທ້າວ ເຈົ້າຈົ່ງຈອດລົດ ເຮົາອິດເມື່ອຍຈະນອນພັກ"

ທິຄາວຸກຸມານທູນຮັບສະໜອງພຣະຣາຊະດຳຣັດແລ້ວຈອດຣາດຊະລົດນັ່ງຂັດສະມາທິທີ່ພື້ນດິນ

ພິກຂຸທັງຫຼາຍ ຄັ້ງນັ້ນແລ ພຣະເຈົ້າພິມມະທັດກາສີຣາດຊົງພາດພຣະສຽນບັນທົມຢູ່ເທິງຕັກຂອງທິຄາວຸກຸມານຍ້ອນຊົງອິດເມື່ອຍມາ ພຽງບຶດດຽວກໍບັນທົມຫຼັບສະນິດ

ຂະນະນັ້ນ ທີຄາວຸກຸມານໄດ້ຊົງດຳຣິດັ່ງນີ້ວ່າ "ພຣະເຈົ້າພົມມະທັດກາສີຣາດນີ້ແລຊົງກໍ່ສິ່ງທີ່ບໍ່ເປັນປະໂຫຍດແກ່ພວກເຮົາຫຼວງຫຼາຍ ຊົງຊ່ວງຊີງກອງທະຫານ ພາຫະນະ ຊົນນະບົດ ຄັງອາວຸດຍຸດໂທປະກອນແລະຄັງພືດພັນທັນຍາຫານຂອງພວກເຮົາໄປ ໄດ້ປົງພະຊົນຊີບຂອງພຣະຊະນົກຊົນນີຂອງເຮົາອີກ ບັດນີ້ເປັນເວລາທີ່ເຮົາພົບຄູ່ເວນ" ຈຶ່ງດຶງພຣະແສງຂັນອອກຈາກຝັກ

ພິກຂຸທັງຫຼາຍ ຄັ້ງນັ້ນ ທີຄາວຸກຸມານໄດ້ຊົງດຳຣິດັ່ງນີ້ວ່າ "ພຣະຊະນົກໄດ້ຕັດສັ່ງເຮົາໄວ້ເມື່ອໃກ້ຈະສະຫວັນຄົດວ່າ ທີຄາວຸ ເຈົ້າຢ່າເຫັນແກ່ຍາວ ຢ່າເຫັນແກ່ສັ້ນ ເວນຍ່ອມ ບໍ່ລະງັບດ້ວຍການຈອງເວນ ແຕ່ລະງັບໄດ້ດ້ວຍການບໍ່ຈອງເວນ ການທີ່ເຮົາຈະລະເມີດພຣະດຳຣັດສັ່ງຂອງພຣະຊະນົກນັ້ນບໍ່ຄວນເລີຍ" ຈຶ່ງສອດພຣະແສງຂັນກັບເຂົ້າຝັກຕາມເດີມ

ພິກຂຸທັງຫຼາຍ ແມ່ນເທື່ອທີ ໔ ໗ລ໗

ແມ່ນເທື່ອທີ ໓ ທີຄາວຸກຸມານກໍຊົງດຳຣິດັ່ງນີ້ວ່າ "ພຣະເຈົ້າພົມມະທັດກາສີຣາດນີ້ແລຊົງກໍ່ສິ່ງທີ່ບໍ່ເປັນປະໂຫຍດແກ່ພວກເຮົາຫຼວງຫຼາຍ ຊົງຊ່ວງຊີງກອງທະຫານ ພາຫະນະ ຊົນນະບົດ ຄັງອາວຸດຍຸດໂທປະກອນແລະຄັງພືດພັນທັນຍາຫານຂອງພວກເຮົາໄປ ໄດ້ປົງພະຊົນຊີບ ຂອງພຣະຊະນົກຊົນນີຂອງເຮົາອີກ ບັດນີ້ເປັນເວລາທີ່ເຮົາພົບຄູ່ເວນ" ຈຶ່ງດຶງພຣະແສງຂັນອອກຈາກຝັກ

ພິກຂຸທັງຫຼາຍ ແມ່ນເທື່ອທີ ໓ ທີຄາວຸກຸມານໄດ້ຊົງດຳຣິດັ່ງນີ້ວ່າ "ພຣະຊະນົກໄດ້ຕັດສັ່ງເຮົາໄວ້ເມື່ອໃກ້ຈະສະຫວັນຄົດວ່າ ທີຄາວຸ ເຈົ້າຢ່າເຫັນແກ່ຍາວ ຢ່າເຫັນແກ່ສັ້ນ ເວນ ຍ່ອມບໍ່ລະງັບດ້ວຍການຈອງເວນ ແຕ່ລະງັບໄດ້ດ້ວຍການບໍ່ຈອງເວນ ການທີ່ເຮົາຈະລະເມີດພຣະດຳຣັດສັ່ງຂອງພຣະຊະນົກນັ້ນບໍ່ຄວນເລີຍ" ຈຶ່ງສອດພຣະແສງຂັນກັບເຂົ້າຝັກຕາມເດີມ

ພິກຂຸທັງຫຼາຍ ພໍດີກັບທີ່ພຣະເຈົ້າພົມມະທັດຊົງສະດຸ້ງພຣະທະໄທ ຫວາດຫວັ່ນ ຟ້າວສະເດັດລຸກຂຶ້ນ

ລຳດັບນັ້ນ ທີຄາວຸກຸມານທູນຖາມພຣະເຈົ້າພົມມະທັດກາສີຣາດດັ່ງນີ້ວ່າ "ຂໍເດຊະ ຍ້ອນອັນໃດພຣະອົງຈຶ່ງຊົງສະດຸ້ງພຣະທະໄທ ຫວາດຫວັ່ນ ຟ້າວສະເດັດລຸກຂຶ້ນ"

ພຣະອົງຕັດຕອບວ່າ "ທ້າວ ເຮົາຝັນວ່າທີຄາວຸກຸມານໂອຣົດຂອງພຣະເຈົ້າທີຄີຕິໂກສົນຣາດຟັນເຮົາດ້ວຍພຣະແສງຂັນຢູ່ທີ່ນີ້ ດັ່ງນັ້ນເຮົາຈຶ່ງຕົກໃຈສະດຸ້ງ ຫວາດຫວັ່ນ ຟ້າວລຸກຂຶ້ນ"

ບັດນັ້ນ ທີຄາວຸກຸມານຈັບພຣະສຽນຂອງພຣະເຈົ້າພົມມະທັດກາສີຣາດດ້ວຍພຣະຫັດຊ້າຍ ດຶງພຣະແສງຂັນດ້ວຍພຣະຫັດຂວາ ແລ້ວກ່າວຂູ່ວ່າ "ຂໍເດຊະ ຂ້າພຣະອົງນີ້ແລ້ວຄືທີຄາວຸກຸມານ

ໂອຣົດຂອງພຣະເຈົ້າທີຄີຕິໂກສົນຣາດຄົນນັ້ນ ພຣະອົງຊົງກໍ່ສິ່ງທີ່ບໍ່ແມ່ນປະໂຫຍດແກ່ພວກຂ້າພຣະອົງຫຼວງຫຼາຍ ຊົງຊ່ວງຊີງກອງທະຫານ ພາຫະນະ ຊົນນະບົດ ຄັງອາວຸດຍຸດໂທປະກອນ ແລະຄັງພືດພັນທັນຍາຫານຂອງພວກຂ້າພຣະອົງໄປ ຊໍ້າຍັງປົງພະຊົນຊີບພຣະຊະນົກຊົນນີຂອງຂ້າພຣະອົງອີກ ເວລານີ້ເປັນເວລາທີ່ຂ້າພຣະອົງໄດ້ເຈີຄູ່ເວນ"

ພຣະເຈົ້າພົມມະທັດໄດ້ຊົບພຣະສຽນລົງແທບບາດຂອງທີຄາວຸກຸມານ ຕັດອ້ອນວອນວ່າ "ທີຄາວຸ ເຈົ້າຈົ່ງໃຫ້ຊີວິດແກ່ເຮົາເທີ້ນ ທີຄາວຸ ຈົ່ງໃຫ້ຊີວິດແກ່ເຮົາເທີ້ນ"

ທີຄາວຸກຸມານຂາບທູນວ່າ "ຂ້າພຣະອົງບໍ່ອາດຈະຖວາຍຊີວິດແດ່ສົມມຸດຕິເທບໄດ້ ອົງສົມມຸດຕິເທບຕ່າງຫາກຄວນພຣະຣາດຊະທານຊີວິດແກ່ຂ້າພຣະອົງ"

ພຣະອົງຕັດວ່າ "ທີຄາວຸ ຖ້າເປັນແນວນັ້ນ ທ່ານຈົ່ງໃຫ້ຊີວິດເຮົາ ແລະເຮົາກໍໃຫ້ຊີວິດແກ່ທ່ານ"

ດັ່ງນັ້ນ ພຣະເຈົ້າພົມມະທັດກາສີຣາດ ແລະທີຄາວຸກຸມານ ຈຶ່ງຕ່າງໄດ້ໃຫ້ຊີວິດແກ່ກັນ ແລະກັນຈັບພຣະຫັດກັນແລະໄດ້ສາບານເພື່ອຈະບໍ່ທຳຮ້າຍກັນແລະກັນ

ພິກຂຸທັງຫຼາຍ ຄັ້ງນັ້ນແລ ພຣະເຈົ້າພົມມະທັດກາສີຣາດໄດ້ຕັດກັບທີຄາວຸກຸມານດັ່ງນີ້ວ່າ "ທີຄາວຸ ຖ້າເປັນແນວນັ້ນທ່ານຈົ່ງທຽມລົດກັບກັນເທີ້ນ"

ພິກຂຸທັງຫຼາຍ ທີຄາວຸກຸມານທູນຮັບສະໜອງພຣະຣາຊະດຳຣັດແລ້ວທຽມລົດໄດ້ຂາບທູນວ່າ "ຂໍເດຊະ ລົດພຣະທີ່ນັ່ງທຽມສຳເລັດແລ້ວ ບັດນີ້ພຣະອົງໂຜດຊົງຮູ້ເວລາອັນຄວນເທີ້ນ"

ພຣະອົງສະເດັດຂຶ້ນຣາດຊະລົດແລ້ວ ທີຄາວຸກຸມານຂັບຣາດຊະລົດໄປບໍ່ດົນກໍມາພົບກອງທະຫານ ເມື່ອສະເດັດເຂົ້ານະຄອນພາຣານະສີແລ້ວ ຮັບສັ່ງໃຫ້ຮຽກປະຊຸມອຳໝາດຣາຊະບໍລິສັດແລ້ວຕັດຖາມວ່າ "ຖ້າພວກທ່ານພົບທີຄາວຸກຸມານໂອຣົດຂອງພຣະເຈົ້າທີຄີຕິໂກສົນຣາດຈະເຮັດຫຍັງແກ່ເຂົາ"

ອຳໝາດລາງພວກຂາບທູນແນວນີ້ວ່າ "ຂໍເດຊະ ພວກຂ້າພຣະອົງຈະຕັດມື

ຂໍເດຊະ ພວກຂ້າພຣະອົງຈະຕັດຕີນ ຂໍເດຊະ ພວກຂ້າພຣະອົງຈະຕັດທັງມືແລະຕີນ

ຂໍເດຊະ ພວກຂ້າພຣະອົງຈະຕັດຫູ ຂໍເດຊະ ພວກຂ້າພຣະອົງຈະຕັດດັງ ຂໍເດຊະ ພວກຂ້າພຣະອົງຈະຕັດທັງຫູແລະດັງ ຂໍເດຊະ ພວກຂ້າພຣະອົງຈະຕັດຫົວ"

ພຣະເຈົ້າພົມມະທັດກາສີຣາດຕັດວ່າ "ນາຍ ຊາຍໜຸ່ມຜູ້ນີ້ແລ ຄື ທີຄາວຸກຸມານ ໂອຣົດຂອງພຣະເຈົ້າທີຄີຕິໂກສົນຣາດຄົນນັ້ນ ໃຜຈະທຳຮ້າຍຊາຍໜຸ່ມຄົນນີ້ບໍ່ໄດ້ ເຂົາໃຫ້ຊີວິດແກ່ເຮົາ ແລະເຮົາກໍໄດ້ໃຫ້ຊີວິດແກ່ເຂົາ"

[໔໙໖] ພິກຂຸທັງຫຼາຍ ຄັ້ງນັ້ນ ພຣະເຈົ້າພົມມະທັດກາສີຣາດໄດ້ຕັດກັບທີຄາວຸກຸມານ ດັ່ງນີ້ວ່າ "ທີຄາວຸ ຄຳສັ່ງທີ່ພຣະຊະນົກຂອງທ່ານໄດ້ຕັດໄວ້ເມື່ອໃກ້ຈະສະຫວັນຄົດວ່າ ທີຄາວຸ ເຈົ້າຢ່າເຫັນແກ່ຍາວ ຢ່າເຫັນແກ່ສັ້ນ ເວນຍ່ອມບໍ່ລະງັບດ້ວຍການຈອງເວນແຕ່ລະງັບໄດ້ດ້ວຍການບໍ່ຈອງເວນ ພຣະຊະນົກຂອງທ່ານຕັດໄວ້ໝາຍຄວາມວ່າແນວໃດ"

ທີຄາວຸກຸມານຂາບທູນວ່າ "ຂໍເດຊະ ຄຳສັ່ງທີ່ພຣະຊະນົກຂອງຂ້າພຣະອົງຕັດໄວ້ເມື່ອໃກ້ຈະສະຫວັນຄົດວ່າ ເຈົ້າຢ່າເຫັນແກ່ຍາວ ນີ້ໝາຍຄວາມວ່າ ຢ່າໄດ້ຈອງເວນໃຫ້ຍືດເຍື້ອ ດັ່ງນັ້ນ ພຣະຊະນົກຂອງຂ້າພຣະອົງຈຶ່ງຕັດໄວ້ເມື່ອໃກ້ຈະສະຫວັນຄົດວ່າ ເຈົ້າຢ່າເຫັນແກ່ຍາວ

ຄຳສັ່ງທີ່ພຣະຊະນົກຂອງຂ້າພຣະອົງຕັດໄວ້ອີກວ່າ ເຈົ້າຢ່າເຫັນແກ່ສັ້ນ ນີ້ໝາຍຄວາມວ່າ ເຈົ້າຢ່າແຕກແຍກຈາກມິດໄວເກີນໄປ ດັ່ງນັ້ນ ພຣະຊະນົກຂອງຂ້າພຣະອົງຈຶ່ງຕັດໄວ້ເມື່ອໃກ້ຈະສະຫວັນຄົດວ່າ ເຈົ້າຢ່າເຫັນແກ່ສັ້ນ

ຄຳສັ່ງທີ່ພຣະຊະນົກຂອງຂ້າພຣະອົງຕັດໄວ້ອີກວ່າ ເວນຍ່ອມບໍ່ລະງັບດ້ວຍການຈອງເວນ ແຕ່ຍ່ອມລະງັບໄດ້ດ້ວຍການບໍ່ຈອງເວນ ນີ້ໝາຍຄວາມວ່າ ພຣະຊະນົກຊົນນີຂອງຂ້າພຣະອົງຖືກພຣະອົງປົງພະຊົນຊີບແລ້ວ ຖ້າຂ້າພຣະອົງປົງພະຊົນຊີບຂອງພຣະອົງແດ່ ຄົນທີ່ມຸ້ງປະໂຫຍດແກ່ພຣະອົງກໍຈະເພິ່ງຂ້າຂ້າພຣະອົງ ຄົນທີ່ມຸ້ງປະໂຫຍດແກ່ຂ້າພຣະອົງ ກໍຈະເພິ່ງຂ້າຄົນພວກນັ້ນອີກ ເມື່ອເປັນແນວນີ້ ເວນນັ້ນບໍ່ເພິ່ງລະງັບດ້ວຍການຈອງເວນ ແຕ່ມາບັດນີ້ ພຣະອົງຊົງພຣະກະລຸນາໂຜດພຣະຣາດຊະທານຊີວິດແກ່ຂ້າພຣະອົງ ແລະຂ້າພຣະອົງກໍໄດ້ທູນຖວາຍພຣະຊົນມະຊີບແກ່ພຣະອົງ ຈຶ່ງເປັນອັນວ່າເວນນັ້ນລະງັບແລ້ວດ້ວຍການບໍ່ຈອງເວນ ດັ່ງນັ້ນ ພຣະຊະນົກຂອງຂ້າພຣະອົງຈຶ່ງຕັດໄວ້ເມື່ອໃກ້ຈະສະຫວັນຄົດວ່າ ເວນຍ່ອມບໍ່ລະງັບດ້ວຍການຈອງເວນ ແຕ່ຍ່ອມລະງັບໄດ້ດ້ວຍການບໍ່ຈອງເວນ"

ພິກຂຸທັງຫຼາຍ ລຳດັບນັ້ນ ພຣະເຈົ້າພົມມະທັດກາສີຣາດຕັດວ່າ "ໜ້າອັດສະຈັນຈິງ ທ່ານຜູ້ຈະເລີນທັງຫຼາຍ ເປັນເລື້ອງທີ່ບໍ່ເຄີຍມີ ທ່ານຜູ້ຈະເລີນທັງຫຼາຍ ທີຄາວຸກຸມານຜູ້ນີ້ສະຫຼຽວສະຫຼາດຈຶ່ງເຂົ້າໃຈຄວາມໝາຍແຫ່ງຄຳເວົ້າທີ່ພຣະຊະນົກຕັດໄວ້ໂດຍຫຍໍ້ໄດ້ໂດຍພິດສະດານ" ແລ້ວໄດ້ໂຜດພຣະຣາດຊະທານຄືນກອງທະຫານ ພາຫະນະ ຊົນນະບົດ ຄັງອາວຸດຍຸດໂທປະກອນແລະຄັງພືດພັນທັນຍາຫານອັນເປັນພຣະຣາດຊະສົມບັດຂອງພຣະຊະນົກແລະໄດ້ພຣະຣາດຊະທານພຣະຣາຊະທິດາໃຫ້ອະພິເສກສົມຣົດດ້ວຍ

ພິກຂຸທັງຫຼາຍ ຂັນຕິແລະໂສຣັດຈະແນວນີ້ໄດ້ເກີດຂຶ້ນແລ້ວແກ່ພຣະຣາຊາເຫຼົ່ານັ້ນຜູ້ຊົງອາຍາຊົງຖືສັດຕາວຸດ ການທີ່ພວກທ່ານບວດໃນທຳວິໄນອັນເຮົາກ່າວໄວ້ດີແລ້ວແນວນີ້ ຈະເພິ່ງມີຄວາມອົດທົນແລະຄວາມສະງົບສະງ່ຽມນັ້ນ ກໍຈະເພິ່ງງົດງາມໃນທຳວິໄນນີ້ແນ່

ແມ່ນເທື່ອທີ ໓ ພຣະຜູ້ມີພຣະພາກເຈົ້າໄດ້ຕັດກັບພິກຂຸເຫຼົ່ານັ້ນດັ່ງນີ້ວ່າ "ຢ່າເລີຍ ພິກຂຸທັງຫຼາຍ ພວກທ່ານຢ່າໝາງໃຈກັນ ຢ່າຜິດກັນ ຢ່າຂັດແຍ່ງກັນ ຢ່າວິວາດກັນເລີຍ"

ພິກຂຸອະທຳມະວາທີອົງນັ້ນກໍຍັງຂາບທູນອີກເປັນຄັ້ງທີ ໓ ວ່າ "ຂໍພຣະຜູ້ມີພຣະພາກເຈົ້າຜູ້ຊົງເປັນທຳມະສາມີຊົງໂຜດຖ້າໄປກ່ອນ ຂໍພຣະອົງຈົ່ງຊົງຂວນຂວາຍນ້ອຍປະກອບຕາມສຸກຂະວິຫາຣະທຳໃນປັດຈຸບັນຢູ່ເທີ້ນ ພວກຂ້າພຣະອົງຈະຜາກົດຍ້ອນຄວາມໝາງໃຈ ຍ້ອນຄວາມຜິດຖຽງ ຍ້ອນຄວາມຂັດແຍ່ງ ຍ້ອນການວິວາດນັ້ນເອງ ຂ້ານ້ອຍ"

ຄັ້ງນັ້ນແລ ພຣະຜູ້ມີພຣະພາກເຈົ້າຊົງດຳຣິວ່າ "ພວກໂມຄະບຸຣຸດເຫຼົ່ານີ້ດື້ດ້ານຫຼາຍ ຈະເຮັດໃຫ້ສາມັກຄີກັນບໍ່ແມ່ນງ່າຍ" ແລ້ວຊົງລຸກຈາກອາສະນະແລ້ວສະເດັດຈາກໄປ

**ທີຄາວຸພານະວານທີ ໑ ຈົບ**

[໔໗໔] ເມື່ອເວລາເຊົ້າ ພຣະຜູ້ມີພຣະພາກເຈົ້າຊົງຄອງອັນຕະຣະວາສົກ ຊົງຖືບາດແລະຈີວອນສະເດັດເຂົ້າໄປບິນທະບາດໃນນະຄອນໂກສຳພີ ສະເດັດກັບຈາກບິນທະບາດ ພາຍຫຼັງສະເຫວີຍສຳເລັດແລ້ວ ຊົງເກັບເສນາສະນະຖືບາດແລະຈີວອນປະທັບຢືນທ່າມກາງສົງຕັດພຣະຄາຖາເຫຼົ່ານີ້ວ່າ

ພິກຂຸມີສຽງດັງເປັນສຽງດຽວກັນ ທີ່ຈະຮູ້ສຶກວ່າຕົນເປັນພານນັ້ນ
ບໍ່ມີເລີຍຈັກອົງດຽວ ຍິ່ງເມື່ອສົງແຕກກັນກໍບໍ່ໄດ້ຄຳນຶງເຖິງເລື້ອງອື່ນ
ພວກທ່ານຂາດສະຕິ ສະແດງຕົນວ່າເປັນບັນດິດ ເຈົ້າຄາຣົມ ເວົ້າໄດ້
ຕາມທີ່ປາຖະໜາ ຈະຍື່ນປາກເວົ້າກໍບໍ່ຮູ້ສຶກເຖິງການຜິດຖຽງ

ຄົນເຫຼົ່າໃດຜູກໃຈເຈັບວ່າ
ມັນໄດ້ດ່າເຮົາ ມັນໄດ້ທຳຮ້າຍເຮົາ
ມັນໄດ້ຊະນະເຮົາ ມັນໄດ້ລັກຂອງຂອງເຮົາ"
ເວນຂອງຄົນເຫຼົ່ານັ້ນ ຍ່ອມລະງັບບໍ່ໄດ້ເລີຍ

ສ່ວນຄົນເຫຼົ່າໃດບໍ່ຜູກໃຈເຈັບວ່າ
ມັນໄດ້ດ່າເຮົາ ມັນໄດ້ທຳຮ້າຍເຮົາ
ມັນໄດ້ຊະນະເຮົາ ມັນໄດ້ລັກຂອງຂອງເຮົາ"
ເວນຂອງເຂົາເຫຼົ່ານັ້ນ ຍ່ອມລະງັບໄດ້
ບໍ່ວ່າຍຸກໃດ ໆ ໃນໂລກນີ້
ເວນຍ່ອມບໍ່ລະງັບດ້ວຍການຈອງເວນ

ແຕ່ລະງັບດ້ວຍການບໍ່ຈອງເວນ
ນີ້ເປັນຂອງເກົ່າ໌

ຄົນເຫຼົ່າອື່ນບໍ່ຮູ້ແຈ້ງວ່າ
ພວກເຮົາກຳລັງຍ່ອຍຍັບຢູ່ທີ່ນີ້
ສ່ວນຄົນເຫຼົ່າໃດ ໃນໝູ່ນັ້ນຮູ້ແຈ້ງ
ຄວາມມຸ້ງຮ້າຍກັນຍ່ອມລະງັບ
ຍ້ອນການປະຕິບັດຂອງຊົນເຫຼົ່ານັ້ນ

ພວກຄົນທີ່ບັ່ນກະດູກ ຂ້າ ລັກຊັບ ຄື ງົວແລະມ້າ
ເຖິງຈະເວລາຊີງແວ່ນແຄວ້ນກັນກໍຍັງກັບມາຄົບຫາກັນໄດ້ອີກ
ເປັນຫຍັງພວກທ່ານຈຶ່ງຄົບຫາກັນບໍ່ໄດ້ນໍ

ຖ້າບຸກຄົນເພິ່ງໄດ້ສະຫາຍ ຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ໌ ເປັນປາດ
ຄອບງຳອັນຕະລາຍທັງປວງໄດ້ແລ້ວ
ເພິ່ງມີໃຈແຊ່ມຊື່ນ ມີສະຕິ ທ່ຽວໄປກັບສະຫາຍນັ້ນ

ຖ້າບຸກຄົນບໍ່ເພິ່ງໄດ້ສະຫາຍ ຜູ້ມີປັນຍາຮັກສາຕົນ
ທ່ຽວໄປນຳກັນໄດ້ ເປັນສາທຸວິຫາຣີ ເປັນນັກປາດ ເພິ່ງປະພຶດຢູ່ຜູ້ດຽວ
ຄືພຣະຣາຊາຊົງລະຖິ້ມແວ່ນແຄວ້ນທີ່ຊົງຊະນະແລ້ວ
ປະພຶດຢູ່ພຣະອົງດຽວ
ແລະຄືຊ້າງມາຕັງຄະຖິ້ມຝູງຢູ່ໂຕດຽວໃນປ່າ ສັນນັ້ນ

ການທ່ຽວໄປຄົນດຽວປະເສີດກວ່າ
ຍ້ອນຄຸນເຄື່ອງຄວາມເປັນສະຫາຍບໍ່ມີໃນຄົນພານ
ບຸກຄົນນັ້ນເພິ່ງທ່ຽວໄປຄົນດຽວແລະບໍ່ເຮັດບາບ
ຄືຊ້າງມາຕັງຄະມີຄວາມຂົນຂວາຍໜ້ອຍຢູ່ໂຕດຽວໃນປ່າ ສັນນັ້ນ

## ໔໗໖. ພາລະກະໂລນະກະຄະມະນະກະຖາ

### ວ່າດ້ວຍການສະເດັດໄປພາລະກະໂລນະກະຄາມ

### ເລື້ອງທ່ານພຣະພະຄຸຢູ່ທີ່ ພາລະກະໂລນະກະຄາມ

[໔໙໕] ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທ່າມກາງສົງນັ້ນແລ ຕັດພຣະຄາຖາເຫຼົ່ານີ້ແລ້ວສະເດັດໄປທາງພາລະກະໂລນະກະຄາມ

ສະໄໝນັ້ນ ທ່ານພຣະພະຄຸພັກຢູ່ທີ່ພາລະກະໂລນະກະຄາມ ທ່ານພຣະພະຄຸໄດ້ເຫັນພຣະຜູ້ມີ ພຣະພາກເຈົ້າກຳລັງສະເດັດມາແຕ່ໄກຈຶ່ງໄດ້ຈັດທີ່ປະທັບ ຕັ້ງນ້ຳລ້າງພຣະບາດ ຕັ່ງຮອງພຣະບາດ ກະເບື້ອງເຊັດພຣະບາດ ໄປຕ້ອນຮັບສະເດັດແລ້ວຮັບບາດແລະຈີວອນ

ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງພຸດທະອາດທີ່ປູໄວ້ແລ້ວຊົງລ້າງພຣະບາດ ຝ່າຍທ່ານ ພຣະພະຄຸຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວ ນັ່ງເຝົ້າຢູ່ທີ່ສົມຄວນ

ພຣະຜູ້ມີພຣະພາກເຈົ້າຕັດກັບທ່ານພຣະພະຄຸຜູ້ນັ່ງເຝົ້າຢູ່ທີ່ສົມຄວນດັ່ງນີ້ວ່າ “ພິກຂຸ ທ່ານຍັງສະບາຍດີບໍ ຍັງພໍເປັນຢູ່ໄດ້ບໍ ບິນທະບາດບໍ່ລຳບາກບໍ”

ທ່ານພຣະພະຄຸຂາບທູນວ່າ “ຍັງສະບາຍດີ ຂ້ານ້ອຍ ຍັງພໍເປັນຢູ່ໄດ້ ຂ້ານ້ອຍ ແລະຂ້າພຣະອົງບິນທະບາດບໍ່ລຳບາກ ຂ້ານ້ອຍ”

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຊີ້ແຈ່ງໃຫ້ທ່ານພຣະພະຄຸເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ສະເດັດລຸກຈາກອາສະນະ ສະເດັດໄປທາງປາຈີນະວັງສະທາຍະວັນ

## ໔໗໘. ປາຈີນະວັງສະທາຍະຄະມະນະກະຖາ

### ວ່າດ້ວຍການສະເດັດໄປປາຈີນະວັງສະທາຍະວັນ

### ເລື້ອງທ່ານພຣະອະນຸຣຸດທະທ່ານພຣະນັນທິຍະແລະທ່ານພຣະກິມພິລະ

[໔໙໖] ສະໄໝນັ້ນ ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະທ່ານພຣະກິມພິລະພັກຢູ່ທີ່ປາຈີນະວັງສະທາຍະວັນ

ຄົນເຝົ້າສວນໄດ້ເຫັນພຣະຜູ້ມີພຣະພາກເຈົ້າກໍາລັງສະເດັດມາແຕ່ໄກ ຈຶ່ງໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ສະມະນະ ທ່ານຢ່າເຂົ້າມາສູ່ສວນນີ້ ຍ້ອນໃນບ່ອນນີ້ມີກຸນລະບຸດ ໓ ຄົນຕ່າງກໍາລັງມຸ້ງປະໂຫຍດຂອງຕົນຢູ່ ຢ່າໄດ້ກະທໍາຄວາມບໍ່ສະງົບແກ່ພວກທ່ານເລີຍ"

ທ່ານພຣະອະນຸຣຸດທະໄດ້ຍິນສຽງຄົນເຝົ້າສວນທູນເປີກສາກັບພຣະຜູ້ມີພຣະພາກເຈົ້າ ຈຶ່ງໄດ້ກ່າວ ກັບຄົນເຝົ້າສວນດັ່ງນີ້ວ່າ "ນີ້ຄົນເຝົ້າສວນ ທ່ານຢ່າຫ້າມພຣະຜູ້ມີພຣະພາກເຈົ້າເລີຍພຣະອົງ ເປັນພຣະສາດສະດາຂອງພວກເຮົາສະເດັດມາເຖິງແລ້ວ" ແລ້ວເຂົ້າໄປຫາທ່ານພຣະນັນທິຍະແລະທ່ານພຣະກິມພິລະ ບອກວ່າ "ພວກທ່ານຈົ່ງຟ້າວອອກໄປ ພຣະບໍຣົມມະສາດສະດາຂອງພວກເຮົາ ສະເດັດ ມາເຖິງແລ້ວ"

ລໍາດັບນັ້ນ ທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະທ່ານພຣະກິມພິລະພາກັນໄປຕ້ອນຮັບສະເດັດພຣະຜູ້ມີພຣະພາກເຈົ້າ ອົງໜຶ່ງຮັບບາດ ແລະຈີວອນຂອງພຣະຜູ້ມີພຣະພາກເຈົ້າອົງໜຶ່ງ ປູອາສະນະ ອົງໜຶ່ງຕັ້ງນໍ້າລ້າງພຣະບາດ ຕັ່ງຮອງພຣະບາດ ກະເບື້ອງເຊັດພຣະບາດ

ພຣະຜູ້ມີພຣະພາກເຈົ້າປະທັບນັ່ງເທິງອາສະນະທີ່ປູໄວ້ແລ້ວໃຫ້ລ້າງພຣະບາດ ທ່ານເຫຼົ່ານັ້ນຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງເຝົ້າຢູ່ທີ່ສົມຄວນ ພຣະຜູ້ມີພຣະພາກເຈົ້າຕັດຖາມ ທ່ານພຣະອະນຸຣຸດທະຜູ້ນັ່ງເຝົ້າຢູ່ທີ່ ທີ່ສົມຄວນວ່າ "ອະນຸຣຸດທະ ພວກທ່ານຍັງສະບາຍດີບໍຍັງພໍເປັນຢູ່ໄດ້ບໍ ບິນທະບາດບໍ່ລໍາບາກບໍ"

ພວກພຣະອະນຸຣຸດທະຂາບທູນວ່າ "ພວກຂ້າພຣະອົງຍັງສະບາຍດີ ຂ້ານ້ອຍ ຍັງພໍເປັນຢູ່ໄດ້ ຂ້ານ້ອຍ ແລະບິນທະບາດບໍ່ລໍາບາກ ຂ້ານ້ອຍ"

ອະນຸຣຸດທະ ນັນທິຍະແລະກິມພິລະ ກໍພວກທ່ານຍັງພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ເປັນນໍ້າໜຶ່ງໃຈດຽວກັນຄືນົມສົດກັບນໍ້າ ແນມໜ້າກັນດ້ວຍຄວາມຊື່ນບານຢູ່ບໍ"

ພວກຂ້າພຣະອົງຍັງພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ເປັນນໍ້າໜຶ່ງໃຈດຽວກັນຄືນົມສົດກັບນໍ້າ ແນມໜ້າກັນດ້ວຍຄວາມຊື່ນບານຢູ່ ຂ້ານ້ອຍ"

ອະນຸຣຸດທະ ນັນທິຍະ ແລະກິມພິລະ ກໍພວກທ່ານຍັງພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ເປັນນໍ້າໜຶ່ງໃຈດຽວກັນຄືນົມສົດກັບນໍ້າ ແນມໜ້າກັນດ້ວຍຄວາມຊື່ນບານ ຢູ່ດ້ວຍວິທີໃດ"

ທ່ານພຣະອະນຸຣຸດທະຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ພວກຂ້າພຣະອົງມີຄວາມຄິດແນວນີ້ວ່າ ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ໄດ້ຢູ່ຮ່ວມກັບເພື່ອນພົມມະຈາຣີແນວນີ້

ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງນັ້ນເຂົ້າໄປຕັ້ງເມດຕາກາຍຍະກຳທັງຕໍ່ໜ້າແລະລັບຫຼັງ ເຂົ້າໄປຕັ້ງເມດຕາວະຈີກຳທັງຕໍ່ໜ້າແລະລັບຫຼັງ ເຂົ້າໄປຕັ້ງເມດຕາມະໂນກຳທັງຕໍ່ໜ້າແລະລັບຫຼັງໃນທ່ານເຫຼົ່ານີ້ ຂ້າພຣະອົງນັ້ນມີຄວາມຄິດແນວນີ້ວ່າ ແນວໃດນໍເຮົາເພິ່ງວາງຈິດຕົນໄປຕາມອຳນາດຈິດຂອງທ່ານທັງສອງນີ້ທໍ່ນັ້ນ ແລ້ວວາງຈິດຕົນໃຫ້ເປັນໄປຕາມອຳນາດ ຈິດຂອງທ່ານເຫຼົ່ານີ້ແລ ກາຍຂອງພວກຂ້າພຣະອົງຕ່າງກັນກໍຈິງແລ ແຕ່ຈິດເປັນຄືດວງດຽວກັນ ຂ້ານ້ອຍ"

ຝ່າຍທ່ານພຣະນັນທິຍະແລະທ່ານພຣະກິມພິລະກໍໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ແມ່ນຂ້າພຣະອົງກໍມີຄວາມຄິດແນວນີ້ວ່າ ເປັນລາບຂອງເຮົານໍ ເຮົາໄດ້ດີແລ້ວນໍ ທີ່ໄດ້ຢູ່ຮ່ວມກັບເພື່ອນພົມມະຈາຣີແນວນີ້

ຂ້າແຕ່ ພຣະອົງຜູ້ຈະເລີນ ຂ້າພຣະອົງນັ້ນເຂົ້າໄປຕັ້ງເມດຕາກາຍຍະກຳທັງຕໍ່ໜ້າແລະລັບຫຼັງ ເຂົ້າໄປຕັ້ງເມດຕາວະຈີກຳທັງຕໍ່ໜ້າແລະລັບຫຼັງ ເຂົ້າໄປຕັ້ງເມດຕາມະໂນກຳທັງຕໍ່ໜ້າແລະລັບຫຼັງໃນທ່ານເຫຼົ່ານີ້ ຂ້າພຣະອົງນັ້ນມີຄວາມຄິດແນວນີ້ວ່າ ແນວໃດນໍເຮົາເພິ່ງວາງຈິດຕົນໄປຕາມອຳນາດຈິດຂອງທ່ານເຫຼົ່ານີ້ທໍ່ນັ້ນ ແລ້ວວາງຈິດຕົນໃຫ້ເປັນໄປຕາມອຳນາດຈິດຂອງທ່ານເຫຼົ່ານີ້ແລ ກາຍຂອງພວກຂ້າພຣະອົງຕ່າງກັນກໍຈິງແລ ແຕ່ຈິດເປັນຄືດວງດຽວກັນ ຂ້ານ້ອຍພວກຂ້າພຣະອົງເປັນຜູ້ພ້ອມພຽງກັນ ຮ່ວມໃຈກັນ ບໍ່ຜິດຖຽງກັນ ເປັນນ້ຳໜຶ່ງໃຈດຽວກັນຄືນົມສົດກັບນ້ຳ ແນມໜ້າກັນດ້ວຍຄວາມຊື່ນບານ ດ້ວຍວິທີແນວນີ້ແລ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ກໍພວກທ່ານເປັນຜູ້ບໍ່ຜະໝາດ ມີຄວາມພຽນເຜົາກິເລດ ມີໃຈເດັດດ່ຽວຢູ່ບໍ"

ພວກພຣະອະນຸຣຸດທະຂາບທູນວ່າ "ພວກຂ້າພຣະອົງເປັນຜູ້ບໍ່ຜະໝາດ ມີຄວາມພຽນເຜົາກິເລດ ມີໃຈເດັດດຽວຢູ່ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຖາມວ່າ "ພວກທ່ານເປັນຜູ້ບໍ່ຜະໝາດ ມີຄວາມພຽນເຜົາກິເລດມີໃຈເດັດດ່ຽວຢູ່ດ້ວຍວິທີໃດນໍ"

ພວກພຣະອະນຸຣຸດທະຂາບທູນວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໃນເລື້ອງນີ້ ບັນດາພວກຂ້າພຣະອົງ ຜູ້ທີ່ກັບຈາກບິນທະບາດມາເຖິງກ່ອນກໍປູອາສະນະ ຕັ້ງນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລ້າງຊຸດກັບເຂົ້າແລ້ວຕັ້ງໄວ້ ຕັ້ງນ້ຳດື່ມນ້ຳໃຊ້ໄວ້

ຜູ້ກັບຈາກບິນທະບາດພາຍຫຼັງ ຖ້າມີອາຫານທີ່ເປັນເງື່ອນ ຖ້າຕ້ອງການກໍສັນໄດ້ ຖ້າບໍ່ຕ້ອງການກໍຖອກຖິ້ມໃນບ່ອນປາສະຈາກຂອງຂຽວສົດ ຫຼືລ້າງໃນນ້ຳທີ່ບໍ່ມີໂຕສັດ ທ່ານເກັບອາສະນະ ເກັບນ້ຳລ້າງຕີນ ຕັ່ງເກີບ ກະເບື້ອງເຊັດຕີນ ລ້າງຊຸດກັບເຂົ້າແລ້ວເກັບໄວ້ ເກັບນ້ຳດື່ມ ນ້ຳໃຊ້ກວາດໂຮງສັນ

ຜູ້ໃດເຫັນໝໍ້ນ້ຳດື່ມ ໝໍ້ນ້ຳໃຊ້ ຫຼືໝໍ້ນ້ຳໃນວັດຈະກຸດຕີວ່າງເປົ່າກໍຕັກນ້ຳຕັ້ງໄວ້ ຖ້າທ່ານບໍ່ອາດເຮັດໄດ້ ພວກຂ້າພຣະອົງກໍກວັກມືຮຽກເພື່ອນມາແລ້ວຊ່ອຍກັນຕັກຍົກເຂົ້າໄປຕັ້ງໄວ້ ແຕ່ບໍ່ໄດ້ຈົ່ມວ່າຍ້ອນເລື້ອງນັ້ນເລີຍ ແລະທຸກ ໆ ໕ ມື້ພວກຂ້າພຣະອົງຈະນັ່ງປະຊຸມສົນທະນາທຳຕະຫຼອດຄືນຮອດແຈ້ງ

ພວກຂ້າພຣະອົງເປັນຜູ້ບໍ່ຜະໝາດ ມີຄວາມພຽນເຜົາກິເລດ ມີໃຈເດັດດ່ຽວຢູ່ດ້ວຍວິທີນີ້ແລ ຂ້ານ້ອຍ"

## ໔໗໕. ປາຣິເລີຍຍະກະຄະມະນະກະຖາ

## ວ່າດ້ວຍການສະເດັດໄປປ່າປາຣິໄລຍະກະ

## ເລື້ອງພະຍາຊ້າງປາຣິໄລຍະກະ

[໔໙໗] ລຳດັບນັ້ນ ພຣະຜູ້ມີພຣະພາກເຈົ້າໄດ້ຊົງຊີ້ແຈ່ງໃຫ້ທ່ານພຣະອະນຸຣຸດທະ ທ່ານພຣະ ນັນທິຍະ ແລະທ່ານພຣະກິມພິລະເຫັນແຈ້ງ ຊວນໃຫ້ຍາກຮັບໄປປະຕິບັດ ປຸກໃຈໃຫ້ອາດຫານແກ່ກ້າ ປອບປະໂລມໃຈໃຫ້ສົດຊື່ນແຈ່ມໃສດ້ວຍທຳມີກະຖາແລ້ວ ສະເດັດລຸກຂຶ້ນຈາກອາສະນະ ສະເດັດຈາຣິກໄປທາງປ່າປາຣິໄລຍະກະ ສະເດັດຈາຣິກໄປຕາມລຳດັບ ຈົນເຖິງປ່າປາຣິໄລຍະກະແລ້ວ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ຂ່ວງໄມ້ຮັງ ໃນແຄມປ່າຣັກຂິຕະວັນ ເຂດປ່າປາຣິໄລຍະກະນັ້ນ

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າສະເດັດຫຼີບຫຼີກຢູ່ໃນບ່ອນສະງັດ ຊົງເກີດຄວາມຄຶດຄຳນຶງໃນພຣະຫະໄທແນວນີ້ວ່າ "ແຕ່ກ່ອນເຮົາຄຸກຄີກັບພວກພິກຂຸຊາວນະຄອນໂກສຳພີທີ່ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ຢູ່ບໍ່ຜາສຸກເລີຍ ເວລານີ້ເຮົາວ່າງເວັ້ນຈາກພວກພິກຂຸຊາວນະຄອນໂກສຳພີເຫຼົ່ານັ້ນ ທີ່ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ຢູ່ຜູ້ດຽວບໍ່ມີເພື່ອນ ຢູ່ຜາສຸກດີ"

ແມ່ນພະຍາຊ້າງໂຕໜຶ່ງຢູ່ຄຸກຄີກັບພວກຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ແລະລູກຊ້າງນ້ອຍ ກິນຫຍ້າຍອດກຸດ ສ່ວນງ່າໄມ້ທີ່ພະຍາຊ້າງນັ້ນຫັກລົງມາກອງໄວ້ ຊ້າງເຫຼົ່ານັ້ນ ກໍກິນໝົດ ໄດ້ດື່ມແຕ່ນ້ຳຂຸ່ນ ໆ ເມື່ອພະຍາຊ້າງນັ້ນຍ່າງລົງຫຼືຂຶ້ນຈາກທ່ານ້ຳ ຊ້າງພັງກໍຍ່າງສຽດສີກາຍໄປ

ຕໍ່ມາ ພະຍາຊ້າງນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ “ເຮົາຢູ່ປະປົນກັບພວກຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ແລະລູກຊ້າງນ້ອຍ ກິນຫຍ້າຍອດກຸດ ສ່ວນງ່າໄມ້ທີ່ເຮົາຫັກລົງມາກອງໄວ້ ຊ້າງເຫຼົ່ານັ້ນກໍກິນໝົດ ໄດ້ດື່ມແຕ່ນ້ຳຂຸ່ນ ໆ ເມື່ອເຮົາຍ່າງລົງຫຼືຂຶ້ນຈາກທ່ານ້ຳ ຊ້າງພັງກໍຍ່າງສຽດສີກາຍໄປ ຢ່າຈັ່ງຊັ້ນເລີຍ ເຮົາເພິ່ງຫຼີກອອກຈາກຝູງຢູ່ແຕ່ຜູ້ດຽວ” ແລ້ວໄດ້ຫຼີກອອກຈາກຝູງຍ່າງໄປທາງເຂດປ່າປາຣິໄລຍະກະ ແຄມປ່າຮັກຂິຕະ ຂ່ວງໄມ້ຮັງ ເຂົ້າໄປຫາພຣະຜູ້ມີພຣະພາກເຈົ້າ ແລ້ວໃຊ້ງວງຕັກນ້ຳດື່ມນ້ຳໃຊ້ເຂົ້າໄປຕັ້ງໄວ້ເພື່ອພຣະຜູ້ມີພຣະພາກເຈົ້າ ແລະປັບພື້ນທີ່ໃຫ້ປາສະຈາກຂອງຂຽວສົດ

ຄັ້ງນັ້ນ ພະຍາຊ້າງນັ້ນໄດ້ມີຄວາມຄິດດັ່ງນີ້ວ່າ “ແຕ່ກ່ອນເຮົາຢູ່ປະປົນກັບພວກຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ແລະລູກຊ້າງນ້ອຍ ກິນຫຍ້າຍອດກຸດ ສ່ວນງ່າໄມ້ທີ່ເຮົາຫັກລົງມາກອງໄວ້ຊ້າງເຫຼົ່ານັ້ນກໍກິນໝົດ ໄດ້ດື່ມແຕ່ນ້ຳຂຸ່ນ ໆ ເມື່ອເຮົາຍ່າງລົງຫຼືຂຶ້ນຈາກທ່ານ້ຳ ຊ້າງພັງກໍຍ່າງສຽດສີກາຍໄປ ເວລານີ້ເຮົາວ່າງເວັ້ນຈາກຊ້າງພາຍ ຊ້າງພັງ ລູກຊ້າງໃຫຍ່ ແລະລູກຊ້າງນ້ອຍຢູ່ແຕ່ຜູ້ດຽວບໍ່ມີເພື່ອນ ຢູ່ຜາສຸກດີ”

ຄັ້ງນັ້ນ ພຣະຜູ້ມີພຣະພາກເຈົ້າຊົງຮູ້ຄວາມສະຫງັດຂອງພຣະອົງ ແລະຊົງຮູ້ຄວາມຄິດຄຳນຶງໃນໃຈຂອງພະຍາຊ້າງນັ້ນດ້ວຍພຣະຫະໄທ ຈຶ່ງຊົງເປ່ງພຣະອຸທານໃນຂະນະນັ້ນວ່າ

ຈິດຂອງພະຍາຊ້າງຜູ້ມີງາງາມຄືງອນລົດນັ້ນ
ສະເໝີກັບຈິດຂອງພຣະພຸດທະເຈົ້າ ຍ້ອນຢູ່ຜູ້ດຽວຍິນດີໃນປ່າຄືກັນ”

ເມື່ອພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ປ່າປາຣິໄລຍະກະຕາມພຣະອັດທະຍາໄສແລ້ວສະເດັດຈາຣິກ ໄປທາງນະຄອນສາວັດຖີ ສະເດັດຈາຣິກໄປຕາມລຳດັບ ລຸເຖິງນະຄອນສາວັດຖີແລ້ວ ໄດ້ຂ່າວວ່າ ພຣະຜູ້ມີພຣະພາກເຈົ້າປະທັບຢູ່ທີ່ພຣະເຊຕະວັນ ອາຮາມຂອງອະນາຖະບິນທິກະຄະຫະບໍດີ ເຂດນະຄອນສາວັດຖີນັ້ນ

ຄັ້ງນັ້ນ ພວກອຸປາສົກອຸປາສິກາຊາວນະຄອນໂກສຳພີເປີກສາກັນວ່າ “ພວກພິກຂຸຊາວນະຄອນໂກສຳພີເຫຼົ່ານີ້ກະທຳຄວາມພິນາດໃຫຍ່ໂຕໃຫ້ພວກເຮົາ ພຣະຜູ້ມີພຣະພາກເຈົ້າຖືກພິກຂຸພວກນີ້ລົບກວນຈຶ່ງສະເດັດຫຼີກໄປ ເອົາລະ ພວກເຮົາຈະບໍ່ອະພິວາດ ບໍ່ລຸກຮັບ ບໍ່ກະທຳອັນຊະລີກຳ ສາມີຈິກຳ ບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ຄົບຫາ ບໍ່ບູຊາພິກຂຸຊາວເມືອງໂກສຳພີພວກນີ້ ແມ່ນພວກທ່ານເຂົ້າມາບິນທະບາດກໍຈະບໍ່ຖວາຍກ້ອນເຂົ້າ ທ່ານພວກນີ້ ເມື່ອຖືກພວກເຮົາບໍ່ສັກ

ກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ຄົບຫາ ບໍ່ບູຊາ ເປັນຜູ້ບໍ່ມີສັກກາຣະແນວນີ້ກໍຈະພາກັນຫຼີກໄປ ສິກໄປຫຼືຈະໃຫ້ພຣະຜູ້ມີພຣະພາກເຈົ້າຊົງໂຜດ"

ຄັ້ງນັ້ນ ອຸປາສົກແລະອຸປາສິກາຊາວນະຄອນໂກສຳພີບໍ່ອະພິວາດ ບໍ່ລຸກຮັບ ບໍ່ກະທຳອັນຊະລີ ກຳ ສາມີຈິກຳ ບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ຄົບຫາ ບໍ່ບູຊາພວກພິກຂຸ ຊາວນະຄອນໂກສຳພີ ແມ່ນພວກພິກຂຸຊາວນະຄອນໂກສຳພີເຂົ້າມາບິນທະບາດກໍບໍ່ຖວາຍກ້ອນເຂົ້າ

ຄັ້ງນັ້ນ ພວກພິກຂຸຊາວນະຄອນໂກສຳພີຖືກອຸປາສົກອຸປາສິກາຊາວນະຄອນໂກສຳພີບໍ່ສັກກາຣະ ບໍ່ເຄົາລົບ ບໍ່ນັບຖື ບໍ່ຄົບຫາ ບໍ່ບູຊາ ເປັນຜູ້ບໍ່ມີສັກກາຣະ ເວົ້າກັນແນວນີ້ວ່າ "ທ່ານທັງຫຼາຍ ຖ້າຈັ່ງຊັ້ນ ພວກເຮົາເພິ່ງເດີນທາງໄປນະຄອນສາວັດຖີແລ້ວລະງັບອະທິກອນນີ້ ໃນສຳນັກຂອງພຣະຜູ້ມີພຣະພາກເຈົ້າ"

## ໔໗໖. ອັດຖາຣະສະວັດຖຸກະຖາ

## ວ່າດ້ວຍເລື້ອງທີ່ກໍ່ໃຫ້ເກີດຄວາມແຕກແຍກ ໑໘ ປະການ

## ເລື້ອງຊົງສະແດງເຫດແຫ່ງຄວາມແຕກແຍກ

### ແກ່ທ່ານພຣະສາຣີບຸດທີ່ນະຄອນສາວັດຖີ

[໔໖໘] ຕໍ່ມາ ພວກພິກຂຸຊາວນະຄອນໂກສຳພີເກັບເສນາສະນະແລ້ວຖືບາດແລະຈີວອນພາກັນເດີນທາງໄປນະຄອນສາວັດຖີ

ທ່ານພຣະສາຣີບຸດໄດ້ຮູ້ຂ່າວວ່າ "ພວກພິກຂຸຊາວນະຄອນໂກສຳພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ຄວາມອື້ສາວ ກໍ່ອະທິກອນໃນສົງເຫຼົ່ານັ້ນກຳລັງເດີນທາງມາສູ່ນະຄອນສາວັດຖີ" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໄດ້ຂ່າວວ່າພວກພິກຂຸຊາວນະຄອນໂກສຳພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງເຫຼົ່ານັ້ນກຳລັງເດີນທາງມາ ສູ່ນະຄອນສາວັດຖີ ຂ້າພຣະອົງຈະປະຕິບັດຕໍ່ພວກທ່ານແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ສາຣີບຸດ ທ່ານຈົ່ງວາງຕົນຢູ່ຢ່າງຊອບທຳເທີ້ນ"

ທ່ານພຣະສາຣີບຸດຂາບທູນຖາມວ່າ "ຂ້າພຣະອົງຈະເພິ່ງຮູ້ໄດ້ແນວໃດວ່າ ຊອບທຳ ບໍ່ຊອບທຳ ຂ້ານ້ອຍ"

## ລັກສະນະຂອງພິກຂຸຜູ້ເປັນອະທຳມະວາທີ ໑໗ ຢ່າງ

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ສາຣີບຸດ ທ່ານເພິ່ງຮູ້ຈັກອະທຳມະວາທີພິກຂຸດ້ວຍວັດຖຸ ໑໗ ປະການ ຄື ພິກຂຸໃນທຳວິໄນນີ້

໑. ສະແດງອະທຳວ່າ ເປັນທຳ
໒. ສະແດງທຳວ່າ ເປັນອະທຳ
໓. ສະແດງສິ່ງບໍ່ແມ່ນວິໄນວ່າ ເປັນວິໄນ
໔. ສະແດງວິໄນວ່າ ບໍ່ແມ່ນວິໄນ
໕. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າ ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້
໖. ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າ ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້
໗. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າຕະຖາຄົດໄດ້ປະພຶດມາ
໘. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດປະພຶດມາວ່າຕະຖາຄົດບໍ່ໄດ້ປະພຶດມາ
໙. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າຕະຖາຄົດໄດ້ບັນຍັດໄວ້
໑໐. ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້ວ່າຕະຖາຄົດບໍ່ໄດ້ບັນຍັດໄວ້
໑໑. ສະແດງອະນາບັດວ່າເປັນອາບັດ
໑໒. ສະແດງອາບັດວ່າເປັນອະນາບັດ
໑໓. ສະແດງອາບັດເບົາວ່າເປັນອາບັດໜັກ
໑໔. ສະແດງອາບັດໜັກວ່າເປັນອາບັດເບົາ
໑໕. ສະແດງອາບັດທີ່ມີສ່ວນເຫຼືອວ່າເປັນອາບັດທີ່ບໍ່ມີສ່ວນເຫຼືອ
໑໖. ສະແດງອາບັດທີ່ບໍ່ມີສ່ວນເຫຼືອວ່າເປັນອາບັດທີ່ມີສ່ວນເຫຼືອ
໑໗. ສະແດງອາບັດຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ
໑໘. ສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ

ສາຣີບຸດ ທ່ານເພິ່ງຮູ້ຈັກອະທຳມະວາທີພິກຂຸດ້ວຍວັດຖຸ ໑໗ ປະການນີ້ແລ

## ລັກສະນະຂອງພິກຂຸຜູ້ເປັນທຳມະວາທີ ໑໗ ຢ່າງ

ສາຣີບຸດ ທ່ານເພິ່ງຮູ້ຈັກທຳມະວາທີພິກຂຸດ້ວຍວັດຖຸ ໑໗ ປະການ ຄື ພິກຂຸໃນທຳວິໄນນີ້

໑. ສະແດງອະທຳວ່າເປັນອະທຳ

๒. ສະແດງທຳວ່າເປັນທຳ
๓. ສະແດງສິ່ງທີ່ບໍ່ແມ່ນວິໄນວ່າບໍ່ແມ່ນວິໄນ
๔. ສະແດງວິໄນວ່າເປັນວິໄນ
๕. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້ວ່າຕະຖາຄົດບໍ່ໄດ້ພາສິດໄວ້ ບໍ່ໄດ້ກ່າວໄວ້
๖. ສະແດງສິ່ງທີ່ຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້ວ່າຕະຖາຄົດໄດ້ພາສິດໄວ້ ໄດ້ກ່າວໄວ້
๗. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດບໍ່ໄດ້ປະພຶດມາວ່າຕະຖາຄົດບໍ່ໄດ້ປະພຶດມາ
๘. ສະແດງຈະຣິຍາຂໍ້ວັດປະຕິບັດທີ່ຕະຖາຄົດປະພຶດມາວ່າຕະຖາຄົດໄດ້ປະພຶດມາ
๙. ສະແດງສິ່ງທີ່ຕະຖາຄົດບໍ່ໄດ້ບັນຍັດໄວ້ວ່າຕະຖາຄົດບໍ່ໄດ້ບັນຍັດໄວ້
๑๐. ສະແດງສິ່ງທີ່ຕະຖາຄົດໄດ້ບັນຍັດໄວ້ວ່າຕະຖາຄົດໄດ້ບັນຍັດໄວ້
๑๑. ສະແດງອະນາບັດວ່າເປັນອະນາບັດ
๑๒. ສະແດງອາບັດວ່າເປັນອາບັດ
๑๓. ສະແດງອາບັດເບົາວ່າເປັນອາບັດເບົາ
๑๔. ສະແດງອາບັດໜັກວ່າເປັນອາບັດໜັກ
๑๕. ສະແດງອາບັດທີ່ມີສ່ວນເຫຼືອວ່າເປັນອາບັດທີ່ມີສ່ວນເຫຼືອ
๑๖. ສະແດງອາບັດທີ່ບໍ່ມີສ່ວນເຫຼືອວ່າເປັນອາບັດທີ່ບໍ່ມີສ່ວນເຫຼືອ
๑๗. ສະແດງອາບັດຊົ່ວຫຍາບວ່າເປັນອາບັດຊົ່ວຫຍາບ
๑๘. ສະແດງອາບັດບໍ່ຊົ່ວຫຍາບວ່າເປັນອາບັດບໍ່ຊົ່ວຫຍາບ

ສາຣິບຸດ ທ່ານເພິ່ງຮູ້ຈັກທຳມະອາທິພິກຂຸດ້ວຍວັດຖຸ ๑๘ ປະການນີ້ແລ

## ເລື້ອງຊົງສະແດງວິທີປະຕິບັດຕໍ່ພວກພິກຂຸຜູ້ກໍ່ຄວາມຜິດຖຽງວິວາດ

## ພຣະເຖຣະຂາບທູນຖາມເຖິງວິທີປະຕິບັດ

[๔๖๙] ທ່ານພຣະມະຫາໂມກຄັນລານະໄດ້ຮູ້ຂ່າວວ່າ ຯລຯ ທ່ານພຣະມະຫາກັດສະປະໄດ້ຮູ້ຂ່າວວ່າ ຯລຯ ທ່ານພຣະມະຫາກັດຈານະໄດ້ຮູ້ຂ່າວວ່າ ຯລຯ ທ່ານພຣະມະຫາໂກດຖິຕະໄດ້ຮູ້ຂ່າວວ່າ ຯລຯ ທ່ານພຣະມະຫາກັບປິນະໄດ້ຮູ້ຂ່າວວ່າ ຯລຯ ທ່ານພຣະມະຫາຈຸນທະໄດ້ຮູ້ຂ່າວວ່າ ຯລຯ ທ່ານພຣະອະນຸຣຸດທະໄດ້ຮູ້ຂ່າວວ່າ ຯລຯ ທ່ານພຣະເຣວະຕະໄດ້ຮູ້ຂ່າວວ່າ ຯລຯ ທ່ານພຣະອຸບາລີໄດ້ຮູ້ຂ່າວວ່າ ຯລຯ ທ່ານພຣະອານົນໄດ້ຮູ້ຂ່າວວ່າ ຯລຯ

ທ່ານພຣະຣາຫຸນໄດ້ຮູ້ຂ່າວວ່າ "ພວກພິກຂຸຊາວນະຄອນໂກສຳພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງເຫຼົ່ານັ້ນກຳລັງເດີນທາງມາສູ່ນະຄອນສາວັດຖີ" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດ ພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ພຣະອົງຜູ້ຈະເລີນ ໄດ້ຂ່າວວ່າ ພວກພິກຂຸຊາວນະຄອນໂກສຳພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງເຫຼົ່ານັ້ນກຳລັງເດີນທາງມາສູ່ນະຄອນສາວັດຖີ ຂ້າພຣະອົງຈະປະຕິບັດຕໍ່ພວກທ່ານແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຣາຫຸນ ທ່ານຈົ່ງວາງຕົນຢູ່ຢ່າງຊອບທຳເທີ້ນ"

ທ່ານພຣະຣາຫຸນຂາບທູນຖາມວ່າ "ຂ້າພຣະອົງຈະເພິ່ງຮູ້ໄດ້ແນວໃດວ່າ ຊອບທຳບໍ່ຊອບທຳຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຣາຫຸນ ທ່ານເພິ່ງຮູ້ຈັກອະທຳມະວາທີພິກຂຸຍ້ອນວັດຖຸ ໑໘ ປະການ ຯລຯ ຣາຫຸນ ທ່ານເພິ່ງຮູ້ຈັກອະທຳມະວາທີພິກຂຸຍ້ອນວັດຖຸ ໑໘ ປະການນີ້ແລ

ຣາຫຸນ ທ່ານເພິ່ງຮູ້ຈັກທຳມະວາທີພິກຂຸຍ້ອນວັດຖຸ ໑໘ ປະການ ຯລຯ ຣາຫຸນ ທ່ານເພິ່ງຮູ້ຈັກທຳມະວາທີພິກຂຸຍ້ອນວັດຖຸ ໑໘ ປະການນີ້ແລ

## ພຣະນາງມະຫາປະຊາບໍດີໂຄຕະມີຂາບທູນຖາມວິທີປະຕິບັດ

[໔໗໐] ພຣະນາງມະຫາປະຊາບໍດີໂຄຕະມີໄດ້ຮູ້ຂ່າວວ່າ "ພວກພິກຂຸຊາວນະຄອນໂກສຳພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນ ໃນສົງເຫຼົ່ານັ້ນກຳລັງເດີນທາງມາສູ່ນະຄອນສາວັດຖີ" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນຖາມພຣະຜູ້ມີພຣະພາກເຈົ້າດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໄດ້ຂ່າວວ່າ ພວກພິກຂຸຊາວນະຄອນໂກສຳພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງ ເຫຼົ່ານັ້ນກຳລັງເດີນທາງມາສູ່ນະຄອນສາວັດຖີ ຂ້າພຣະອົງຈະປະຕິບັດຕໍ່ພິກຂຸເຫຼົ່ານັ້ນແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ໂຄຕະມີ ບັນດາພິກຂຸທັງຝ່າຍທຳມະວາທີແລະຝ່າຍອະທຳມະວາທີ ທ່ານຈົ່ງຟັງທຳໃນພິກຂຸທັງ ໒ ຝ່າຍ ເມື່ອຟັງແລ້ວຈົ່ງພໍໃຈຄວາມເຫັນ ຄວາມຖືກໃຈ ຄວາມພໍໃຈແລະຄວາມເຊື່ອຖືຂອງພວກພິກຂຸຝ່າຍທຳມະວາທີ ອັນໜຶ່ງ ຂໍ້ວັດປະຕິບັດທີ່ພິກຂຸນີສົງເພິ່ງຫວັງຈາກພິກຂຸສົງທຸກຢ່າງນັ້ນກໍເພິ່ງຫວັງຈາກພິກຂຸຝ່າຍທຳມະວາທີທໍ່ນັ້ນ"

## ອະນາຖະບິນທິກະຄະຫະບໍດີຂາບທູນຖາມວິທີປະຕິບັດ

[໔໗໑] ອະນາຖະບິນທິກະຄະຫະບໍດີໄດ້ຮູ້ຂ່າວວ່າ "ພວກພິກຂຸຊາວນະຄອນໂກສຳພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງເຫຼົ່ານັ້ນກຳລັງເດີນທາງມາສູ່ນະຄອນສາວັດຖີ" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໄດ້ຂ່າວວ່າ ພວກພິກຂຸຊາວນະຄອນໂກສຳພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງເຫຼົ່ານັ້ນກຳລັງເດີນທາງມາສູ່ນະຄອນສາວັດຖີ ຂ້າພຣະອົງຈະປະຕິບັດຕໍ່ພິກຂຸເຫຼົ່ານັ້ນແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ຄະຫະບໍດີ ທ່ານຈົ່ງຖວາຍທານໃນພິກຂຸທັງສອງຝ່າຍເມື່ອ ແລ້ວຈົ່ງຟັງທຳໃນພິກຂຸທັງສອງຝ່າຍ ແລ້ວຈົ່ງພໍໃຈຄວາມເຫັນ ຄວາມຖືກໃຈ ຄວາມພໍໃຈແລະຄວາມເຊື່ອຖືຂອງພວກພິກຂຸຝ່າຍທຳມະວາທີທີ່ນັ້ນ"

## ນາງວິສາຂາມິຄາຣະມາຕາຂາບທູນຖາມວິທີປະຕິບັດ

[໔໗໔] ນາງວິສາຂາມິຄາຣະມາຕາໄດ້ຮູ້ຂ່າວວ່າ "ພວກພິກຂຸຊາວນະຄອນໂກສຳພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງເຫຼົ່ານັ້ນກຳລັງເດີນທາງມາສູ່ນະຄອນສາວັດຖີ" ຈຶ່ງເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນຖາມພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂ້າແດ່ ພຣະອົງຜູ້ຈະເລີນ ໄດ້ຂ່າວວ່າພວກພິກຂຸຊາວນະຄອນໂກສຳພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງເຫຼົ່ານັ້ນກຳລັງເດີນທາງມາສູ່ນະຄອນສາວັດຖີ ຂ້າພຣະອົງຈະປະຕິບັດຕໍ່ພິກຂຸເຫຼົ່ານັ້ນແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ວິສາຂາ ທ່ານຈົ່ງຖວາຍທານໃນພິກຂຸທັງສອງຝ່າຍ ບັດແລ້ວ ຈົ່ງຟັງທຳໃນພິກຂຸທັງສອງຝ່າຍ ແລ້ວຈົ່ງພໍໃຈຄວາມເຫັນ ຄວາມຖືກໃຈ ຄວາມພໍໃຈແລະຄວາມເຊື່ອຖືຂອງພວກພິກຂຸຝ່າຍທຳມະວາທີທີ່ນັ້ນ"

## ເລື້ອງໃຫ້ເສນາສະນະທີ່ວ່າງແກ່ພວກພິກຂຸຜູ້ກໍ່ຄວາມຜິດຖຽງວິວາດ

[໔໗໕] ຄັ້ງນັ້ນ ພວກພິກຂຸຊາວນະຄອນໂກສຳພີໄດ້ເດີນທາງໄປໂດຍລຳດັບ ຈົນເຖິງນະຄອນສາວັດຖີ ທ່ານພຣະສາຣີບຸດເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າດັ່ງນີ້

ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ໄດ້ຂ່າວວ່າ ພວກພິກຂຸຊາວນະຄອນໂກສໍາພີຜູ້ກໍ່ຄວາມໝາງໃຈ ກໍ່ຄວາມຜິດຖຽງ ກໍ່ຄວາມວິວາດ ກໍ່ເລື້ອງອື້ສາວ ກໍ່ອະທິກອນໃນສົງເຫຼົ່ານັ້ນກໍາລັງເດີນທາງມາສູ່ ນະຄອນສາວັດຖີ ຂ້າພຣະອົງຈະຈັດເສນາສະນະຕໍ່ພວກທ່ານແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ທ່ານເພິ່ງໃຫ້ເສນາສະນະທີ່ວ່າງ"

## ເລື້ອງຈັດເສນາສະນະໃຫ້ວ່າງ

## ສໍາລັບພວກພິກຂຸຜູ້ກໍ່ຄວາມຜິດຖຽງວິວາດ

ທ່ານພຣະສາຣີບຸດຂາບທູນຖາມວ່າ "ກໍຖ້າບໍ່ມີເສນາສະນະວ່າງ ຈະປະຕິບັດແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ຖ້າເປັນແນວນັ້ນ ທ່ານເພິ່ງຈັດເສນາສະນະໃຫ້ ວ່າງແລ້ວໃຫ້ ແຕ່ເຮົາບໍ່ກ່າວວ່າ ເພິ່ງຫ້າມເສນາສະນະແກ່ພິກຂຸຜູ້ມີພັນສາຫຼາຍໂດຍປະຣິຍາຍ ໃດ ໆ (ຍ້ອນ) ຜູ້ໃດຫ້າມຕ້ອງອາບັດທຸກກົດ"

## ເລື້ອງໃຫ້ອາມິດທໍ່ ໆ ກັນ

ທ່ານພຣະສາຣີບຸດຂາບທູນຖາມວ່າ "ໃນອາມິດ ຈະປະຕິບັດແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ສາຣີບຸດ ເພິ່ງແບ່ງອາມິດໃຫ້ພິກຂຸທໍ່ ໆ ກັນທຸກອົງ"

## ໔໗໗. ໂອສາຣະນານຸຊານະນາ

## ວ່າດ້ວຍຊົງອະນຸຍາດຮັບເຂົ້າໝູ່ເຊິ່ງພິກຂຸຜູ້ຖືກລົງອຸກເຂປະນີຍະກໍາ

[໔໗໔] ຄັ້ງນັ້ນ ພິກຂຸຜູ້ຖືກລົງອຸກເຂປະນີຍະກໍາອົງໜຶ່ງກໍາລັງພິຈາລະນາພຣະທໍາວິໄນ ວ່າ "ນັ້ນເປັນອາບັດ ນັ້ນບໍ່ເປັນອາບັດເປັນໄປບໍ່ໄດ້ ເຮົາຕ້ອງອາບັດ ເຮົາບໍ່ຕ້ອງອາບັດເປັນໄປບໍ່ ໄດ້ ເຮົາຖືກລົງອຸກເຂປະນີຍະກໍາແລ້ວ ເຮົາບໍ່ຖືກລົງອຸກເຂປະນີຍະກໍາເປັນໄປບໍ່ໄດ້ ເຮົາຖືກລົງ ອຸກເຂປະນີຍະກໍາດ້ວຍກໍາທີ່ຊອບທໍາ ບໍ່ເສຍຫາຍ ຄວນແກ່ຖານະ"

ລໍາດັບນັ້ນ ພິກຂຸຜູ້ຖືກລົງອຸກເຂປະນີຍະກໍານັ້ນເຂົ້າໄປຫາພວກພິກຂຸຜູ້ປະພຶດຕາມ ກ່າວ ວ່າ "ທ່ານທັງຫຼາຍ ນັ້ນເປັນອາບັດ ນັ້ນບໍ່ເປັນອາບັດເປັນໄປບໍ່ໄດ້ ຂ້ານ້ອຍຕ້ອງອາບັດ ຂ້ານ້ອຍ ບໍ່ຕ້ອງອາບັດເປັນໄປບໍ່ໄດ້ ຂ້ານ້ອຍຖືກລົງອຸກເຂປະນີຍະກໍາແລ້ວ ຂ້ານ້ອຍບໍ່ຖືກລົງອຸກເຂປະນີ ຍະກໍາເປັນໄປບໍ່ໄດ້ ຂ້ານ້ອຍຖືກລົງອຸກເຂປະນີຍະກໍາດ້ວຍກໍາທີ່ຊອບທໍາ ບໍ່ເສຍຫາຍ ຄວນແກ່ ຖານະ ເຊີນພວກທ່ານມາຮັບຂ້ານ້ອຍເຂົ້າໝູ່ດ້ວຍເທີ້ນຂ້ານ້ອຍ"

ລຳດັບນັ້ນ ພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳເຫຼົ່ານັ້ນພາພິກຂຸຜູ້ຖືກລົງອຸກເຂປະນີຍະກຳນັ້ນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈເລີນ ພິກຂຸຜູ້ຖືກລົງອຸກເຂປະນີຍະກຳອົງນີ້ກ່າວແນວນີ້ວ່າ ທ່ານທັງຫຼາຍ ນັ້ນເປັນອາບັດ ນັ້ນບໍ່ເປັນອາບັດເປັນໄປບໍ່ໄດ້ ຂ້ານ້ອຍຕ້ອງອາບັດ ຂ້ານ້ອຍບໍ່ຕ້ອງອາບັດເປັນໄປບໍ່ໄດ້ ຂ້ານ້ອຍຖືກລົງອຸກເຂປະນີຍະກຳແລ້ວ ຂ້ານ້ອຍບໍ່ຖືກລົງອຸກເຂປະນີຍະກຳເປັນໄປບໍ່ໄດ້ ຂ້ານ້ອຍຖືກລົງອຸກເຂປະນີຍະກຳດ້ວຍກຳທີ່ຊອບທຳ ບໍ່ເສຍຫາຍ ຄວນແກ່ຖານະ ເຊີນພວກທ່ານມາຮັບຂ້ານ້ອຍເຂົ້າໝູ່ດ້ວຍເທີ້ນຂ້ານ້ອຍ ພວກຂ້າພຣະອົງຈະເພິ່ງປະຕິບັດແນວໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ພິກຂຸທັງຫຼາຍ ນັ້ນເປັນອາບັດ ນັ້ນບໍ່ເປັນອາບັດເປັນໄປບໍ່ໄດ້ ພິກຂຸອົງນັ້ນຕ້ອງອາບັດແລ້ວ ພິກຂຸອົງນັ້ນບໍ່ຕ້ອງອາບັດເປັນໄປບໍ່ໄດ້ ພິກຂຸອົງນັ້ນຖືກລົງອຸກເຂປະນີຍະກຳແລ້ວ ພິກຂຸອົງນັ້ນບໍ່ຖືກລົງອຸກເຂປະນີຍະກຳເປັນໄປບໍ່ໄດ້ ທ່ານຖືກລົງອຸກເຂປະນີຍະກຳດ້ວຍກຳທີ່ຊອບທຳ ບໍ່ເສຍຫາຍ ຄວນແກ່ຖານະ ຍ້ອນທ່ານຕ້ອງອາບັດ ຖືກລົງອຸກເຂປະນີຍະກຳແລ້ວແລະເຫັນອາບັດ ພິກຂຸທັງຫຼາຍ ດັ່ງນັ້ນ ພວກທ່ານຈົ່ງຮັບພິກຂຸອົງນັ້ນເຂົ້າໝູ່ເທີ້ນ"

## ໔໗໘. ສັງຄະສາມັກຄີກະຖາ

## ວ່າດ້ວຍສັງຄະສາມັກຄີ

[໔໗໕] ຄັ້ງນັ້ນພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳເຫຼົ່ານັ້ນ ຮັບທ່ານຜູ້ຖືກລົງອຸກເຂປະນີຍະກຳເຂົ້າໝູ່ແລ້ວເຂົ້າໄປຫາພວກພິກຂຸຜູ້ລົງອຸກເຂປະນີຍະກຳຮອດບ່ອນຢູ່ກ່າວວ່າ "ທ່ານທັງຫຼາຍ ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນໄດ້ມີແລ້ວຍ້ອນເລື້ອງໃດ ພິກຂຸອົງນັ້ນຜູ້ຕ້ອງອາບັດຖືກລົງອຸກເຂປະນີຍະກຳແລ້ວ ເຫັນອາບັດແລະສົງຮັບເຂົ້າໝູ່ແລ້ວ ເອົາລະ ພວກເຮົາຈະເຮັດສັງຄະສາມັກຄີເພື່ອລະງັບເລື້ອງນັ້ນ"

ລຳດັບນັ້ນ ພວກພິກຂຸຜູ້ລົງອຸກເຂປະນີຍະກຳເຫຼົ່ານັ້ນເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ພວກພິກຂຸຜູ້ປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກຳເຫຼົ່ານັ້ນກ່າວແນວນີ້ວ່າ ທ່ານທັງຫຼາຍ ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນໄດ້ມີແລ້ວຍ້ອນເລື້ອງໃດ ພິກຂຸອົງນັ້ນຜູ້ຕ້ອງອາບັດຖືກລົງອຸກເຂປະນີຍະກຳແລ້ວ ເຫັນອາ

ບັດແລະສົງຮັບເຂົ້າໝູ່ແລ້ວ ເອົາລະ ພວກເຮົາຈະເຮັດສັງຄະສາມັກຄີເພື່ອລະງັບເລື້ອງນັ້ນ ພວກຂ້າພຣະອົງຈະເພິ່ງປະຕິບັດແນວໃດ"

ພຣະຜູ້ມີພຣະພາກເຈົ້າຮັບສັ່ງວ່າ "ພິກຂຸທັງຫຼາຍ ຍ້ອນພິກຂຸອົງນັ້ນຜູ້ຕ້ອງອາບັດ ຖືກລົງອຸກເຂປະນີຍະກຳແລ້ວ ເຫັນອາບັດແລະສົງຮັບເຂົ້າໝູ່ແລ້ວ ຖ້າເປັນແນວນັ້ນ ສົງຈົ່ງເຮັດສັງຄະສາມັກຄີເພື່ອລະງັບເລື້ອງນັ້ນ"

## ວິທີເຮັດສັງຄະສາມັກຄີແລະກຳມະວາຈາ

ພິກຂຸທັງຫຼາຍ ສົງເພິ່ງເຮັດສັງຄະສາມັກຄີແນວນີ້ ຄື ພວກພິກຂຸທັງທີ່ເປັນໄຂ້ແລະບໍ່ເປັນໄຂ້ເພິ່ງປະຊຸມກັນທຸກອົງ ອົງໃດຈະໃຫ້ສັນທະບໍ່ໄດ້ ຈາກນັ້ນພິກຂຸຜູ້ສະຫຼາດສາມາດເພິ່ງປະກາດໃຫ້ສົງຮູ້ດ້ວຍຍັດຕິທຸຕິຍະກຳມະວາຈາວ່າ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນໄດ້ມີແລ້ວຍ້ອນເລື້ອງໃດ ພິກຂຸອົງນັ້ນຜູ້ຕ້ອງອາບັດ ຖືກລົງອຸກເຂປະນີຍະກຳ ເຫັນອາບັດແລະສົງຮຽກເຂົ້າໝູ່ແລ້ວ ຖ້າສົງພ້ອມແລ້ວ ສົງເພິ່ງເຮັດສັງຄະສາມັກຄີເພື່ອລະງັບເລື້ອງນັ້ນ ນີ້ເປັນຍັດຕິ

ທ່ານຜູ້ຈະເລີນ ຂໍສົງຈົ່ງຟັງຂ້າພະເຈົ້າ ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນໄດ້ມີແລ້ວຍ້ອນເລື້ອງໃດ ພິກຂຸອົງນັ້ນຜູ້ຕ້ອງອາບັດ ຖືກລົງອຸກເຂປະນີຍະກຳ ເຫັນອາບັດແລະສົງຮຽກເຂົ້າໝູ່ແລ້ວ ສົງເຮັດສັງຄະສາມັກຄີເພື່ອລະງັບເລື້ອງນັ້ນ ທ່ານອົງໃດເຫັນດ້ວຍກັບການເຮັດສັງຄະສາມັກຄີເພື່ອລະງັບເລື້ອງນັ້ນ ທ່ານອົງນັ້ນເພິ່ງນິ່ງ ທ່ານອົງໃດບໍ່ເຫັນດ້ວຍ ທ່ານອົງນັ້ນເພິ່ງທັກທ້ວງ

ສົງເຮັດສັງຄະສາມັກຄີເພື່ອລະງັບເລື້ອງນັ້ນແລ້ວ ຄວາມແຕກແຫ່ງສົງຖືກກຳຈັດແລ້ວ ຄວາມຂັດເຄືອງແຫ່ງສົງຖືກກຳຈັດແລ້ວ ຄວາມແບ່ງແຍກແຫ່ງສົງຖືກກຳຈັດແລ້ວ ການເຮັດສົງໃຫ້ເປັນຕ່າງ ໆ ກັນຖືກກຳຈັດແລ້ວ ສົງເຫັນດ້ວຍ ຍ້ອນເຫດນັ້ນຈຶ່ງນິ່ງ ຂ້າພະເຈົ້າຂໍຖືຄວາມນິ່ງນັ້ນເປັນມະຕິແນວນີ້

ສົງເພິ່ງເຮັດອຸໂປສົດ ເພິ່ງຍົກປາຕິໂມກຂຶ້ນສະແດງໃນຂະນະນັ້ນທັນທີ

# ໔໗໙. ອຸປາລິສັງຄະສາມັກຄີປຸດສາ

## ວ່າດ້ວຍພຣະອຸບາລີຂາບທູນຖາມເຖິງສັງຄະສາມັກຄີ

## ເລື້ອງຊົງສະແດງສັງຄະສາມັກຄີ ໘ ຢ່າງແກ່ທ່ານພຣະອຸບາລີ

[໔໗໙] ຄັ້ງນັ້ນ ທ່ານພຣະອຸບາລີເຂົ້າໄປເຝົ້າພຣະຜູ້ມີພຣະພາກເຈົ້າ ເຖິງທີ່ປະທັບ ຖວາຍອະພິວາດພຣະຜູ້ມີພຣະພາກເຈົ້າແລ້ວນັ່ງຢູ່ທີ່ສົມຄວນ ໄດ້ຂາບທູນພຣະຜູ້ມີພຣະພາກເຈົ້າ ດັ່ງນີ້ວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນມີຍ້ອນເລື້ອງໃດ ສົງຍັງບໍ່ໄດ້ວິນິດໄສ ຍັງບໍ່ໄດ້ສືບສວນເລື້ອງນັ້ນແລ້ວເຮັດສັງຄະສາມັກຄີ ສັງຄະສາມັກຄີນັ້ນຊອບທຳບໍ"

ພຣະຜູ້ມີພຣະພາກເຈົ້າຕັດວ່າ "ອຸບາລີ ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນຍ່ອມມີຍ້ອນເລື້ອງໃດ ສົງຍັງບໍ່ໄດ້ວິນິດໄສ ຍັງບໍ່ໄດ້ສືບສວນ ເລື້ອງນັ້ນແລ້ວເຮັດສັງຄະສາມັກຄີ ສັງຄະສາມັກຄີນັ້ນບໍ່ຊອບດ້ວຍທຳ

ທ່ານພຣະອຸບາລີຂາບທູນຖາມວ່າ "ຂ້າແຕ່ ພຣະອົງຜູ້ຈະເລີນ ກໍຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນຍ່ອມມີຍ້ອນເລື້ອງໃດ ສົງໄດ້ວິນິດໄສ ສືບສວນເລື້ອງນັ້ນແລ້ວເຮັດສັງຄະສາມັກຄີ ສັງຄະສາມັກຄີນັ້ນຊອບດ້ວຍທຳບໍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸບາລີ ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນຍ່ອມມີຍ້ອນເລື້ອງໃດ ສົງໄດ້ວິນິດໄສ ສືບສວນ ເລື້ອງນັ້ນແລ້ວເຮັດສັງຄະສາມັກຄີ ສັງຄະສາມັກຄີນັ້ນຊອບດ້ວຍທຳ

## ສັງຄະສາມັກຄີ ໘ ຢ່າງ

ທ່ານພຣະອຸບາລີຂາບທູນຖາມວ່າ "ສັງຄະສາມັກຄີມີທໍ່ໃດ ຂ້ານ້ອຍ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ອຸບາລີ ສັງຄະສາມັກຄີມີ ໘ ຢ່າງ ຄື ສັງຄະສາມັກຄີ ຜິດໄປຈາກອັດຖະ ແຕ່ໄດ້ພະຍັນຊະນະ ແລະສັງຄະສາມັກຄີໄດ້ທັງອັດຖະແລະໄດ້ທັງພະຍັນຊະນະ

ສັງຄະສາມັກຄີຜິດໄປຈາກອັດຖະແຕ່ໄດ້ພະຍັນຊະນະແນວໃດແດ່ ຄື ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນຍ່ອມມີຍ້ອນເລື້ອງໃດ ສົງບໍ່ໄດ້ວິນິດໄສ ບໍ່ໄດ້ສືບສວນເລື້ອງນັ້ນແລ້ວເຮັດສັງຄະສາມັກຄີ ແນວນີ້ຮຽກວ່າສັງຄະສາມັກຄີຜິດໄປຈາກອັດຖະແຕ່ໄດ້ພະຍັນຊະນະ

ສັງຄະສາມັກຄີໄດ້ທັງອັດຖະແລະໄດ້ທັງພະຍັນຊະນະເປັນແນວໃດ? ຄື ຄວາມໝາງໃຈ ຄວາມຜິດຖຽງ ຄວາມຂັດແຍ່ງ ຄວາມວິວາດ ຄວາມແຕກແຫ່ງສົງ ຄວາມຂັດເຄືອງແຫ່ງສົງ ຄວາມແບ່ງແຍກແຫ່ງສົງ ການເຮັດສົງໃຫ້ເປັນຕ່າງ ໆ ກັນຍ່ອມມີຍ້ອນເລື້ອງໃດ ສົງໄດ້ວິນິດໄສ ສືບສວນເລື້ອງນັ້ນແລ້ວເຮັດສັງຄະສາມັກຄີ ແນວນີ້ຮຽກວ່າສັງຄະສາມັກຄີໄດ້ທັງອັດຖະແລະ ໄດ້ທັງພະຍັນຊະນະ

ອຸບາລີ ສັງຄະສາມັກຄີມີ ໔ ຢ່າງນີ້ແລ

## ເລື້ອງບໍ່ຖືກຕຳໜິໂດຍສີນອຸບາລີຄາຖາ

[໔໗໗] ລຳດັບນັ້ນ ທ່ານພຣະອຸບາລີລຸກຈາກອາສະນະ ຫົ່ມອຸດຕະຣາສົງບ່ຽງບ່າຂ້າງໜຶ່ງ ປະນົມມືໄປທາງພຣະຜູ້ມີພຣະພາກເຈົ້າແລ້ວຂາບທູນພຣະຜູ້ມີພຣະພາກເຈົ້າດ້ວຍຄາຖາດັ່ງນີ້ວ່າ

[໔໗໘] ພຣະອຸບາລີຂາບທູນຖາມວ່າ "ເມື່ອມີກິດຈະການເປັກສາ
ການຕີຄວາມແລະການວິນິດໄສຄວາມເລື້ອງວິໄນເກີດຂຶ້ນແກ່ສົງ
ໃນພຣະທຳວິໄນນີ້ ພິກຂຸຢ່າງໃດຈຶ່ງຈັດວ່າເປັນຜູ້ມີອຸປະກາຣະຫຼາຍ
ແລະຄວນແກ່ການຍົກຍ້ອງ"

ພຣະຜູ້ມີພຣະພາກເຈົ້າຕັດຕອບວ່າ "ເບື້ອງຕົ້ນ ພິກຂຸມີສີນບໍ່ດ່າງພ້ອຍ
ມີມາຣະຍາດສະງົບສະງ່ຽມ ສັດຕູຕຳໜິບໍ່ໄດ້ໂດຍທຳ
ຍ້ອນບໍ່ມີຄວາມຜິດທີ່ຈະຕຳໜິໄດ້

ທ່ານຜູ້ເຊັ່ນນັ້ນ ຕັ້ງຢູ່ໃນສີລະວິສຸດທິ ກ້າຫານ ເວົ້າຈາສະສານ
ເຂົ້າທີ່ປະຊຸມກໍບໍ່ຫວາດຫວັ່ນ ບໍ່ຕົກຂະເງີ້ ເວົ້າມີເຫດຜົນບໍ່ເສຍຄວາມ
ເມື່ອທ່ານຖືກຖາມບັນຫາໃນບ່ອນປະຊຸມກໍຄືງເປັນເຊັ່ນນັ້ນ
ບໍ່ນິ່ງອຶ້ງ ບໍ່ເກີ້ເຂີນ ເປັນຜູ້ຊ່ຽວຊານການ ເວົ້າຖືກການ ສາມາດຕອບໄດ້
ເປັນທີ່ພໍໃຈຂອງວິນຍູຊົນ ເຄົາລົບພິກຂຸຜູ້ມີພັນສາຫຼາຍກວ່າ
ແກ່ກ້າໃນອາຈະຣິຍະວາທະຂອງຕົນ ວິພາກວິຈານໄດ້
ເວົ້າໄດ້ຄ່ອງ ສາມາດຈັບຂໍ້ຜິດພາດຂອງສັດຕູໄດ້

ເປັນເຫດໃຫ້ສັດຕູຕ້ອງປຣາໄຊແລະມະຫາຊົນກໍນິຍົມ
ທ່ານຍ່ອມບໍ່ລົບລ້າງຄວາມເຊື່ອຄືອາຈະຣິຍະວາທະຂອງຕົນ
ສາມາດໃນການແກ້ບັນຫາ
ສາມາດທໍາງານທູດແລະຮັບເຮັດກິດຂອງສົງ
ຄືຮັບບິນທະບາດຂອງທີ່ມີຄົນນໍາມາບູຊາສັນນັ້ນ
ເມື່ອຖືກສົງສົ່ງໄປເຈລະຈາກໍບໍ່ທະນົງໂຕວ່າຕົນເຮັດໄດ້
ຍ້ອນການເຮັດໜ້າທີ່ເຈລະຈານັ້ນ
ພິກຂຸຕ້ອງອາບັດຍ້ອນວັດຖຸມີປະມານທໍ່ໃດ
ແລະການອອກຈາກອາບັດຍ່ອມມີດ້ວຍວິທີໃດ
ວິພັງທັງສອງນັ້ນມາແລ້ວດ້ວຍດີແກ່ພິກຂຸອົງນັ້ນ
ຜູ້ເຊິ່ງສະຫຼາດໃນວິທີອອກຈາກອາບັດ
ອັນໜຶ່ງ ພິກຂຸເຮັດກໍາມີກໍ່ຄວາມໝາງໃຈເປັນຕົ້ນເຫຼົ່າໃດ
ຍ່ອມເຖິງການຂັບອອກແລະຖືກຂັບອອກດ້ວຍເລື້ອງເຊັ່ນໃດ
ທ່ານສະຫຼາດໃນວິພັງ ຍ່ອມເຂົ້າໃຈວິທີການຮັບເຂົ້າໝູ່ແມ່ນນັ້ນ
ທີ່ຄວນເຮັດແກ່ພິກຂຸຜູ້ປະພຶດຂໍ້ວັດປະຕິບັດນັ້ນສໍາເລັດແລ້ວ
ທ່ານເຄົາລົບພິກຂຸທັງຫຼາຍຜູ້ມີພັນສາຫຼາຍກວ່າ
ຄື ທັງທີ່ເປັນເຖຣະ ມັດຊິມະ ແລະນະວະກະ
ເປັນບັນດິດ ເຮັດປະໂຫຍດແກ່ມະຫາຊົນໃນໂລກນີ້
ພິກຂຸແນວນີ້ຈຶ່ງຄວນແກ່ການຍົກຍ້ອງໃນທໍາວິໄນນີ້ແລ"

**ໂກສໍາພິກະຂັນທະກະທີ ໑໐ ຈົບ**

## ໔໗໐. ລວມເລື້ອງທີ່ມີໃນໂກສໍາພິກະຂັນທະກະ

### ໂກສໍາພິກະຂັນທະກະ ມີ ໑໔ ເລື້ອງ ຄື

ເລື້ອງສົມເດັດພຣະຊິນວອນປະທັບໃນນະຄອນໂກສໍາພີ
ພິກຂຸຜິດຖຽງວິວາດກັນຍ້ອນບໍ່ເຫັນວ່າເປັນອາບັດ
ແລະລົງອຸກເຂປະນີຍະກໍາແກ່ກັນຍ້ອນເຫດເລັກໜ້ອຍ
ເລື້ອງພຣະຜູ້ມີພຣະພາກເຈົ້າຊົງແນະນໍາໃຫ້ພິກຂຸສະແດງອາບັດ
ເລື້ອງພວກພິກຂຸປະພຶດຕາມພິກຂຸຜູ້ຖືກລົງອຸກເຂປະນີຍະກໍາ
ເຮັດອຸໂປສົດພາຍໃນສີມາ
ເລື້ອງທ່ານພຣະພະຄຸຢູ່ທີ່ ພາລະກະໂລນະກະຄາມ

ເລື້ອງທ່ານພຣະອະນຸຣຸດທະ ທ່ານພຣະນັນທິຍະ ແລະທ່ານພຣະກິມພິລະຢູ່ ຈີນະວັງສະທາຍະວັນ
ເລື້ອງພະຍາຊ້າງປາຣິໄລຍະກະ
ເລື້ອງຊົງສະແດງເຫດແຫ່ງຄວາມແຕກແຍກ ແກ່ທ່ານພຣະສາຣີບຸດທີ່ນະຄອນສາວັດຖີ
ເລື້ອງຊົງສະແດງວິທີປະຕິບັດຕໍ່ພວກພິກຂຸຜູ້ກໍ່ຄວາມຜິດຖຽງວິວາດ

ທ່ານພຣະສາຣີບຸດ ທ່ານພຣະມະຫາໂມກຄັນລານະ ທ່ານພຣະມະຫາກັດສະປະ ທ່ານພຣະມະຫາກັດຈານະ ທ່ານພຣະມະຫາໂກດຖິຕະ ທ່ານພຣະມະຫາກັບປິນະ ທ່ານພຣະມະຫາຈຸນທະ ທ່ານພຣະອະນຸຣຸດທະ ທ່ານພຣະເຣວະຕະ ທ່ານພຣະອຸບາລີ

ທ່ານພຣະອານົນ ທ່ານພຣະຣາຫຸນ ພຣະນາງມະຫາປະຊາບໍດີໂຄຕະມີ ອະນາຖະບິນທິກະຄະຫະບໍດີ ແລະນາງວິສາຂາມິຄາຣະມາຕາ ເຂົ້າເຝົ້າຂາບທູນຖາມວິທີປະຕິບັດ ເລື້ອງໃຫ້ເສນາສະນະທີ່ວ່າງແກ່ພວກພິກຂຸຜູ້ກໍ່ຄວາມຜິດຖຽງວິວາດ ເລື້ອງຈັດເສນາສະນະໃຫ້ວ່າງສຳລັບພວກພິກຂຸຜູ້ກໍ່ຄວາມຜິດຖຽງວິວາດ ເລື້ອງແບ່ງອາມິດໃຫ້ທົ່ວ ໆ ກັນ
ເລື້ອງວິທີແລະກຳມະວາຈາເຮັດສັງຄະສາມັກຄີ ເລື້ອງຊົງສະແດງສັງຄະສາມັກຄີ ໘ ຢ່າງແກ່ທ່ານພຣະອຸບາລີ ເລື້ອງບໍ່ຖືກຕຳໜິໂດຍສິນ

**ໂກສຳພິກະຂັນທະກະ ຈົບ**

**ມະຫາວັກ ຈົບບໍລິບູນ**